# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໑໖

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໗

## ສັງຍຸດຕະນິກາຍ ນິທານນະວັກ



ສະບັບຄົ້ນຄົ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໙ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໙ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໒໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໑໖

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ๗

## ສັງຍຸດຕະນິກາຍ ນິທານນະວັກ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສັມມາສັມພຸດທະເຈົ້າພຣະອົງນັ້ນ**

# ໑. ນິທານສັງຍຸດ

# ໑. ພຸດທະວັກ

**ໝວດວ່າດ້ວຍພຣະພຸດທະເຈົ້າ**

## ໑. ປະຕິດຈະສະມຸບປາທະສູດ

**ວ່າດ້ວຍປະຕິດຈະສະມຸບບາດ**

[໑] ຂ້າພະເຈົ້າ ໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍ ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງປະຕິດຈະສະມຸບບາດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ

ພິກຂຸທັງຫຼາຍ ປະຕິດຈະສະມຸບບາດເປັນແນວໃດ ຄື

ຍ້ອນ ອະວິດຊາ ເປັນປັດໄຈ ສັງຂານຈຶ່ງມີ

ຍ້ອນ ສັງຂານ ເປັນປັດໄຈ ວິນຍານຈຶ່ງມີ
ຍ້ອນ ວິນຍານ ເປັນປັດໄຈ ນາມຮູບຈຶ່ງມີ
ຍ້ອນ ນາມຮູບ ເປັນປັດໄຈ ສະລາຍະຕະນະຈຶ່ງມີ
ຍ້ອນ ສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ
ຍ້ອນ ຜັດສະ ເປັນປັດໄຈ ເວທະນາຈຶ່ງມີ
ຍ້ອນ ເວທະນາ ເປັນປັດໄຈ ຕັນຫາຈຶ່ງມີ
ຍ້ອນ ຕັນຫາ ເປັນປັດໄຈ ອຸປາທານຈຶ່ງມີ
ຍ້ອນ ອຸປາທານ ເປັນປັດໄຈ ພົບຈຶ່ງມີ
ຍ້ອນ ພົບ ເປັນປັດໄຈ ຊາດຈຶ່ງມີ

ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ) ຈຶ່ງມີ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ພິກຂຸທັງຫຼາຍ ນີ້ຮຽກວ່າ ປະຕິດຈະສະມຸບບາດ

ອັນໜຶ່ງ ຍ້ອນ ອະວິດຊາ ດັບໄປບໍ່ເຫຼືອດ້ວຍ ວິຣາຄະ ສັງຂານຈຶ່ງດັບ
ຍ້ອນ ສັງຂານດັບ ວິນຍານຈຶ່ງດັບ
ຍ້ອນ ວິນຍານດັບ ນາມຮູບຈຶ່ງດັບ
ຍ້ອນ ນາມຮູບດັບ ສະລາຍະຕະນະຈຶ່ງດັບ
ຍ້ອນ ສະລາຍະຕະນະດັບ ຜັດສະຈຶ່ງດັບ
ຍ້ອນ ຜັດສະດັບ ເວທະນາຈຶ່ງດັບ
ຍ້ອນ ເວທະນາດັບ ຕັນຫາຈຶ່ງດັບ
ຍ້ອນ ຕັນຫາດັບ ອຸປາທານຈຶ່ງດັບ
ຍ້ອນ ອຸປາທານດັບ ພົບຈຶ່ງດັບ
ຍ້ອນ ພົບດັບ ຊາດຈຶ່ງດັບ

ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວ

**ປະຕິດຈະສະມຸບປາທະສູດທີ ໑ ຈົບ**

# ໘. ວິພັງຄະສູດ

## ວ່າດ້ວຍການຈຳແນກປະຕິດຈະສະມຸບບາດ

[໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງ ຈັກຈຳແນກປະຕິດຈະສະມຸບບາດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ

ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ປະຕິດຈະສະມຸບບາດ ເປັນແນວໃດ? ຄື

ຍ້ອນ ອະວິດຊາ ເປັນປັດໄຈ ສັງຂານຈຶ່ງມີ
ຍ້ອນ ສັງຂານ ເປັນປັດໄຈ ວິນຍານຈຶ່ງມີ
ຍ້ອນ ວິນຍານ ເປັນປັດໄຈ ນາມຮູບຈຶ່ງມີ
ຍ້ອນ ນາມຮູບ ເປັນປັດໄຈ ສະລາຍະຕະນະຈຶ່ງມີ
ຍ້ອນ ສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ
ຍ້ອນ ຜັດສະ ເປັນປັດໄຈ ເວທະນາຈຶ່ງມີ
ຍ້ອນ ເວທະນາ ເປັນປັດໄຈ ຕັນຫາຈຶ່ງມີ
ຍ້ອນ ຕັນຫາ ເປັນປັດໄຈ ອຸປາທານຈຶ່ງມີ
ຍ້ອນ ອຸປາທານ ເປັນປັດໄຈ ພົບຈຶ່ງມີ
ຍ້ອນ ພົບ ເປັນປັດໄຈ ຊາດຈຶ່ງມີ

ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງມີ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ຊະຣາແລະມໍລະນະ ເປັນແນວໃດ?

ຄື ຄວາມແກ່ ຄວາມຊຸດໂຊມ ຄວາມມີແຂ້ວຫຼ່ອນ ຄວາມມີຜົມຫງອກ ຄວາມມີໜັງຫ່ຽວຍານ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີ ໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊະຣາ

ມໍລະນະ ເປັນແນວໃດ?

ຄື ຄວາມຈຸຕິ ຄວາມເຄື່ອນໄປ ຄວາມທຳລາຍໄປ ຄວາມຫາຍໄປ ຄວາມຕາຍກ່າວຄື ຄວາມຕາຍ ການທຳກາລະ ຄວາມແຕກແຫ່ງຂັນ ຄວາມປະຖິ້ມຮ່າງກາຍ ຄວາມຂາດແຫ່ງຊີວິ ຕິນຊີຂອງເຫຼົ່າສັດນັ້ນ ໆ ຈາກໝູ່ສັດນັ້ນ ໆ ນີ້ຮຽກວ່າ ມໍລະນະ

ຊະຣາແລະມໍລະນະ ດັ່ງພັນລະນາມານີ້ ຮຽກວ່າ ຊະຣາແລະມໍລະນະ

ຊາດ ເປັນແນວໃດ?

ຄື ຄວາມເກີດ ຄວາມເກີດພ້ອມ ຄວາມຢັ່ງລົງ ຄວາມບັງເກີດສະເພາະ ຄວາມບັງເກີດຂຶ້ນສະເພາະ ຄວາມຜາກົດແຫ່ງຂັນ ຄວາມໄດ້ອາຍະຕະນະ ໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊາດ

ພົບ ມີທີ່ໃດ?
ພົບມີ ໓ ປະການນີ້ ຄື

໑. ກາມະພົບ (ພົບທີ່ເປັນກາມາວະຈອນ)
໒. ຣູບພົບ (ພົບທີ່ເປັນຣູບປາວະຈອນ)
໓. ອະຣູບພົບ (ພົບທີ່ເປັນອະຣູບປະວະຈອນ)

ນີ້ຮຽກວ່າ ພົບ

ອຸປາທານ ມີທີ່ໃດ?
ອຸປາທານມີ ໔ ປະການນີ້ ຄື

໑. ກາມຸປາທານ (ຄວາມຢຶດໝັ້ນໃນກາມ)
໒. ທິດຖຸປາທານ (ຄວາມຢຶດໝັ້ນໃນທິດຖິ)
໓. ສີລັບພະຕຸປາທານ (ຄວາມຢຶດໝັ້ນໃນສີນພົດ)
໔. ອັດຕະວາທຸປາທານ (ຄວາມຢຶດໝັ້ນໃນວາທະວ່າມີອັດຕາ)

ນີ້ຮຽກວ່າ ອຸປາທານ

ຕັນຫາ ມີທີ່ໃດ?
ຕັນຫາມີ ໖ ປະການນີ້ ຄື

໑. ຣູບຕັນຫາ (ຄວາມທະຍານຢາກໄດ້ຣູບ)
໒. ສັດທະຕັນຫາ (ຄວາມທະຍານຢາກໄດ້ສຽງ)

໓. ຄັນທະຕັນຫາ (ຄວາມທະຍານຢາກໄດ້ກິ່ນ)
໔. ຣະສະຕັນຫາ (ຄວາມທະຍານຢາກໄດ້ຣົດ)
໕. ໂຜດຖັບພະຕັນຫາ (ຄວາມທະຍານຢາກໄດ້ໂຜດຖັບພະ)
໖. ທຳມະຕັນຫາ (ຄວາມທະຍານຢາກໄດ້ທຳມາຣົມ)

ນີ້ຮຽກວ່າ ຕັນຫາ

ເວທະນາ ມີທີ່ໃດ?
ເວທະນາມີ ໖ ປະການນີ້ ຄື

໑. ຈັກຂຸສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງຕາ)
໒. ໂສຕະສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງຫູ)
໓. ຄານະສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງດັງ)
໔. ຊິວຫາສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງລີ້ນ)
໕. ກາຍະສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງກາຍ)
໖. ມະໂນສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງໃຈ)

ນີ້ຮຽກວ່າ ເວທະນາ

ຜັດສະ ມີທີ່ໃດ?
ຜັດສະມີ ໖ ປະການນີ້ ຄື

໑. ຈັກຂຸສຳຜັດ (ຄວາມກະທົບທາງຕາ)
໒. ໂສຕະສຳຜັດ (ຄວາມກະທົບທາງຫູ)
໓. ຄານະສຳຜັດ (ຄວາມກະທົບທາງດັງ)
໔. ຊິວຫາສຳຜັດ (ຄວາມກະທົບທາງລີ້ນ)
໕. ກາຍສຳຜັດ (ຄວາມກະທົບທາງກາຍ)
໖. ມະໂນສຳຜັດ (ຄວາມກະທົບທາງໃຈ)

ນີ້ຮຽກວ່າ ຜັດສະ

ສະລາຍະຕະນະ ມີທີ່ໃດ?
ສະລາຍະຕະນະມີ ໖ ປະການນີ້ ຄື

໑. ຈັກຂວາຍະຕະນະ (ອາຍະຕະນະຄືຕາ)

໒. ໂສຕາຍະຕະນະ (ອາຍະຕະນະຄືຫູ)
໓. ຄານາຍະຕະນະ (ອາຍະຕະນະຄືດັງ)
໔. ຊິວຫາຍະຕະນະ (ອາຍະຕະນະຄືລີ້ນ)
໕. ກາຍາຍະຕະນະ (ອາຍະຕະນະຄືກາຍ)
໖. ມະນາຍະຕະນະ (ອາຍະຕະນະຄືໃຈ)

ນີ້ຮຽກວ່າ ສະລາຍະຕະນະ

ນາມ ຮູບ ເປັນແນວໃດ?

ຄື ເວທະນາ (ຄວາມສະເຫວີຍອາລົມ) ສັນຍາ (ຄວາມຈື່ໄດ້ໝາຍຮູ້) ເຈຕະນາ (ຄວາມຈິງໃຈ) ຜັດສະ (ຄວາມກະທົບຫຼືສຳຜັດ) ມະນະສິການ (ຄວາມທຳໄວ້ໃນໃຈ) ນີ້ຮຽກວ່າ ນາມ

ມະຫາພູຕະ ໔ ແລະ ຮູບທີ່ອາໄສມະຫາພູຕະ ໔ ນີ້ຮຽກວ່າ ຮູບ
ນາມແລະຮູບດັ່ງພັນລະນາມານີ້ ຮຽກວ່າ ນາມ ຮູບ

ວິນຍານ ມີທີ່ໃດ?
ວິນຍານມີ ໖ ປະການນີ້ ຄື

໑. ຈັກຂຸວິນຍານ (ຄວາມຮູ້ແຈ້ງອາລົມທາງຕາ)
໒. ໂສຕະວິນຍານ (ຄວາມຮູ້ແຈ້ງອາລົມທາງຫູ)
໓. ຄານະວິນຍານ (ຄວາມຮູ້ແຈ້ງອາລົມທາງດັງ)
໔. ຊິວຫາວິນຍານ (ຄວາມຮູ້ແຈ້ງອາລົມທາງລີ້ນ)
໕. ກາຍວິນຍານ (ຄວາມຮູ້ແຈ້ງອາລົມທາງກາຍ)
໖. ມະໂນວິນຍານ (ຄວາມຮູ້ແຈ້ງອາລົມທາງໃຈ)

ນີ້ຮຽກວ່າ ວິນຍານ

ສັງຂານທັງຫຼາຍ ມີທີ່ໃດ?
ສັງຂານມີ ໓ ປະການນີ້ ຄື

໑. ກາຍສັງຂານ (ສະພາວະທີ່ປຸງແຕ່ງກາຍ)
໒. ວະຈີສັງຂານ (ສະພາວະທີ່ປຸງແຕ່ງວາຈາ)
໓. ຈິດຕະສັງຂານ (ສະພາວະທີ່ປຸງແຕ່ງໃຈ)

ນີ້ຮຽກວ່າ ສັງຂານທັງຫຼາຍ

ອະວິດຊາ ເປັນແນວໃດ?

ຄື ຄວາມບໍ່ຮູ້ໃນທຸກ ຄວາມບໍ່ຮູ້ໃນທຸກຂະສະມຸໄທ (ເຫດເກີດແຫ່ງທຸກ) ຄວາມບໍ່ຮູ້ໃນທຸກຂະນິໂຣທະ (ຄວາມດັບແຫ່ງທຸກ) ຄວາມບໍ່ຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງທຸກ) ນີ້ຮຽກວ່າ ອະວິດຊາ

ພິກຂຸທັງຫຼາຍ ຍ້ອນ ອະວິດຊາ ເປັນປັດໄຈ ສັງຂານຈຶ່ງມີ
ຍ້ອນ ສັງຂານ ເປັນປັດໄຈ ວິນຍານຈຶ່ງມີ ຯລຯ

ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ
ຍ້ອນສັງຂານດັບ ວິນຍານຈຶ່ງດັບ ຯລຯ

ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

**ວິພັງຄະສູດທີ ໘ ຈົບ**

# ๓. ປະຕິປະທາສູດ

## ວ່າດ້ວຍປະຕິປະທາ

[๓] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງມິດສາປະຕິປະທາ (ຂໍ້ປະຕິບັດຜິດ) ແລະສຳມາປະຕິປະທາ (ຂໍ້ປະຕິບັດຖືກ) ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ມິດສາປະຕິປະທາ ເປັນແນວໃດ? ຄື

ຍ້ອນ ອະວິດຊາ ເປັນປັດໄຈ ສັງຂານຈຶ່ງມີ
ຍ້ອນ ສັງຂານ ເປັນປັດໄຈ ວິນຍານຈຶ່ງມີ ຯລຯ

ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ນີ້ຮຽກວ່າ ມິດສາປະຕິປະທາ

ພິກຂຸທັງຫຼາຍ ສຳມາປະຕິປະທາ ເປັນແນວໃດ? ຄື

ຍ້ອນ ອະວິດຊາດັບໄປບໍ່ເຫຼືອດ້ວຍ ວິຣາຄະ ສັງຂານຈຶ່ງດັບ
ຍ້ອນ ສັງຂານດັບ ວິນຍານຈຶ່ງດັບ ຯລຯ

ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ນີ້ຮຽກວ່າ ສຳມາປະຕິປະທາ

**ປະຕິປະທາສູດທີ ៣ ຈົບ**

# ៤. ວິປັດສີສູດ

## ວ່າດ້ວຍພຣະພຸດທະເຈົ້າພຣະນາມວ່າວິປັດສີ

[៤] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າ ອະຣະຫັນຕະສຳມາສຳພຸດທະເຈົ້າພຣະນາມວ່າວິປັດສີ ກ່ອນແຕ່ຕັດສະຣູ້ເມື່ອເປັນພຣະໂພທິສັດ ຍັງບໍ່ໄດ້ຕັດສະຣູ້ ໄດ້ມີຄວາມຄິດຄຳນຶງແນວນີ້ວ່າ ໂລກເຖິງຄວາມຄັບແຄ້ນ ຈຶ່ງເກີດ ແກ່ ຕາຍ ຈຸຕິ ແລະ ອຸບັດ ກໍບຸກຄົນບໍ່ຮູ້ອຸບາຍສະບັດອອກຈາກທຸກ ຄື ຊະຣາແລະມໍລະນະນີ້ ເມື່ອໃດຈຶ່ງຈະພົ້ນຈາກທຸກ ຄື ຊະຣາແລະມໍລະນະນີ້ໄດ້

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດມີ ຊະຣາແລະມໍລະນະຈຶ່ງມີ ຍ້ອນອັນໃດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອຊາດມີ ຊະຣາແລະມໍລະນະຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດມີ ຊາດຈຶ່ງມີ ຍ້ອນອັນໃດ? ເປັນປັດໄຈ ຊາດຈຶ່ງມີ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອພົບມີ ຊາດຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດມີ ພົບຈຶ່ງມີ ຍ້ອນອັນໃດ? ເປັນປັດໄຈ ພົບຈຶ່ງມີ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອອຸປາທານມີ ພົບຈຶ່ງມີ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດມີ ອຸປາທານຈຶ່ງມີ ຍ້ອນອັນໃດ? ເປັນປັດໄຈ ອຸປາທານຈຶ່ງມີ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອຕັນຫາມີ ອຸປາທານຈຶ່ງມີ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດມີ ຕັນຫາຈຶ່ງມີ ຍ້ອນອັນໃດ? ເປັນປັດໄຈ ຕັນຫາຈຶ່ງມີ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອເວທະນາມີ ຕັນຫາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດມີ ເວທະນາຈຶ່ງມີ ຍ້ອນອັນໃດ? ເປັນປັດໄຈ ເວທະນາຈຶ່ງມີ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອຜັດສະມີເວທະນາຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດມີ ຜັດສະຈຶ່ງມີ ຍ້ອນອັນໃດ? ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອສະລາຍະຕະນະມີ ຜັດສະຈຶ່ງມີ ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດມີ ສະລາຍະຕະນະຈຶ່ງມີ ຍ້ອນອັນໃດ? ເປັນປັດໄຈ ສະລາຍະຕະນະຈຶ່ງມີ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອນາມຮູບມີ ສະລາຍະຕະນະຈຶ່ງມີ ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດມີ ນາມຮູບຈຶ່ງມີ ຍ້ອນອັນໃດ? ເປັນປັດໄຈ ນາມຮູບຈຶ່ງມີ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອວິນຍານມີ ນາມຮູບຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດມີ ວິນຍານຈຶ່ງມີ ຍ້ອນອັນໃດ? ເປັນປັດໄຈ ວິນຍານຈຶ່ງມີ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອສັງຂານມີ ວິນຍານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດມີ ສັງຂານທັງຫຼາຍຈຶ່ງມີ ຍ້ອນອັນໃດເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອອະວິດຊາມີ ສັງຂານທັງຫຼາຍຈຶ່ງມີ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ

ອັນໜຶ່ງ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ໗ລ໗ ດັ່ງພັນລະນາມານີ້ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ຈັກຂຸ ຍານ ປັນຍາ ວິດຊາ ແສງສະຫວ່າງໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນໄດ້ເກີດຂຶ້ນແກ່ພຣະວິປັດສີໂພທິສັດແລ້ວ ວ່າ ສະມຸໄທ (ຄວາມເກີດຂຶ້ນ) ສະມຸໄທ (ຄວາມເກີດຂຶ້ນ)

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ ຍ້ອນອັນໃດດັບ ຊະຣາແລະມໍລະນະຈຶ່ງດັບ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອຊາດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ ຍ້ອນຊາດດັບ ຊະຣາແລະມໍລະນະຈຶ່ງດັບ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດບໍ່ມີ ຊາດຈຶ່ງບໍ່ມີ ຍ້ອນອັນໃດດັບ ຊາດຈຶ່ງດັບ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອພົບບໍ່ມີ ຊາດຈຶ່ງບໍ່ມີ ຍ້ອນພົບດັບ ຊາດຈຶ່ງດັບ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດບໍ່ມີ ພົບຈຶ່ງບໍ່ມີ ຍ້ອນອັນໃດດັບ ພົບຈຶ່ງດັບ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອອຸປາທານ ບໍ່ມີພົບຈຶ່ງບໍ່ມີ ຍ້ອນອຸປາທານດັບ ພົບຈຶ່ງດັບ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດບໍ່ມີ ອຸປາທານຈຶ່ງບໍ່ມີ ຍ້ອນອັນໃດດັບ ອຸປາທານຈຶ່ງດັບ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອຕັນຫາບໍ່ມີ ອຸປາທານຈຶ່ງບໍ່ມີ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດບໍ່ມີ ຕັນຫາຈຶ່ງບໍ່ມີ ຍ້ອນອັນໃດດັບ ຕັນຫາຈຶ່ງດັບ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອເວທະນາບໍ່ມີ ຕັນຫາຈຶ່ງບໍ່ມີ ຍ້ອນເວທະນາດັບ ຕັນຫາຈຶ່ງດັບ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດບໍ່ມີ ເວທະນາຈຶ່ງບໍ່ມີ ຍ້ອນອັນໃດດັບ ເວທະນາຈຶ່ງດັບ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອຜັດສະບໍ່ມີ ເວທະນາຈຶ່ງບໍ່ມີ ຍ້ອນຜັດສະດັບ ເວທະນາຈຶ່ງດັບ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດບໍ່ມີ ຜັດສະຈຶ່ງບໍ່ມີ ຍ້ອນອັນໃດດັບ ຜັດສະ ຈຶ່ງດັບ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອສະລາຍະຕະນະບໍ່ມີ ຜັດສະຈຶ່ງບໍ່ມີ ຍ້ອນສະລາຍະຕະນະດັບ ຜັດສະຈຶ່ງດັບ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດບໍ່ມີ ສະລາຍະຕະນະຈຶ່ງບໍ່ມີ ຍ້ອນອັນໃດດັບ ສະລາຍະຕະນະຈຶ່ງດັບ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອນາມຮູບບໍ່ມີ ສະລາຍະຕະນະຈຶ່ງບໍ່ມີ ຍ້ອນນາມຮູບດັບ ສະລາຍະຕະນະຈຶ່ງດັບ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດບໍ່ມີ ນາມຮູບຈຶ່ງບໍ່ມີ ຍ້ອນອັນໃດດັບ ນາມຮູບຈຶ່ງດັບ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອວິນຍານບໍ່ມີ ນາມຮູບຈຶ່ງບໍ່ມີ ຍ້ອນວິນຍານດັບ ນາມຮູບຈຶ່ງດັບ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດບໍ່ມີ ວິນຍານຈຶ່ງບໍ່ມີ ຍ້ອນອັນໃດດັບ ວິນຍານຈຶ່ງດັບ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອສັງຂານທັງຫຼາຍບໍ່ມີ ວິນຍານຈຶ່ງບໍ່ມີ ຍ້ອນສັງຂານດັບ ວິນຍານຈຶ່ງດັບ

ຈາກນັ້ນ ຊົງພຣະດຳຣິວ່າ ເມື່ອອັນໃດບໍ່ມີ ສັງຂານທັງຫຼາຍຈຶ່ງບໍ່ມີ ຍ້ອນອັນໃດດັບສັງຂານຈຶ່ງດັບ ຍ້ອນຊົງມະນະສິການໂດຍແຍບຄາຍ ຈຶ່ງໄດ້ຊົງຮູ້ແຈ້ງດ້ວຍພຣະປັນຍາວ່າ ເມື່ອອະວິດຊາບໍ່ມີ ສັງຂານທັງຫຼາຍຈຶ່ງບໍ່ມີ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ

ອັນໜຶ່ງ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ฯລฯ ດັ່ງພັນລະນາມານີ້ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ຈັກຂຸ ຍານ ປັນຍາ ວິດຊາ ແສງສະຫວ່າງໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນໄດ້ເກີດຂຶ້ນແກ່ພຣະວິປັດສີໂພທິສັດວ່າ ນິໂຣດ (ຄວາມດັບ) ນິໂຣດ (ຄວາມດັບ)

**ວິປັດສີສູດທີ ໔ ຈົບ**

ພຣະພຸດທະເຈົ້າອີກ ໆ ພຣະອົງຕໍ່ໄປນີ້ ກໍເພິ່ງຂະຫຍາຍຄວາມຄືກັນ

# ໕. ສິຂີສູດ

## ວ່າດ້ວຍພຣະພຸດທະເຈົ້າພຣະນາມວ່າສິຂີ

[໕] ພິກຂຸທັງຫຼາຍ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະນາມວ່າ ສິຂີ ฯລฯ

**ສິຂີສູດທີ ໕ ຈົບ**

## ໖. ເວດສະພູສູດ

### ວ່າດ້ວຍພຣະພຸດທະເຈົ້າພຣະນາມວ່າເວດສະພູ

[໖] ພິກຂຸທັງຫຼາຍ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະນາມວ່າ ເວດສະພູ ຯລຯ

**ເວດສະພູສູດທີ ໖ ຈົບ**

## ໗. ກະກຸສັນທະສູດ

### ວ່າດ້ວຍພຣະພຸດທະເຈົ້າພຣະນາມວ່າກະກຸສັນທະ

[໗] ພິກຂຸທັງຫຼາຍ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະນາມວ່າ ກະກຸສັນທະ ຯລຯ

**ກະກຸສັນທະສູດທີ ໗ ຈົບ**

## ໘. ໂກນາຄະມະນະສູດ

### ວ່າດ້ວຍພຣະພຸດທະເຈົ້າພຣະນາມວ່າໂກນາຄະມະນະ

[໘] ພິກຂຸທັງຫຼາຍ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະນາມວ່າ ໂກນາຄະມະນະ ຯລຯ

**ໂກນາຄະມະນະສູດທີ ໘ ຈົບ**

## ໙. ກັດສະປະສູດ

### ວ່າດ້ວຍພຣະພຸດທະເຈົ້າພຣະນາມວ່າກັດສະປະ

[໙] ພິກຂຸທັງຫຼາຍ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະນາມວ່າ ກັດສະປະ ຯລຯ

**ກັດສະປະສູດທີ ໙ ຈົບ**

# ໑໐. ໂຄຕະມະສູດ

## ວ່າດ້ວຍພຣະພຸດທະເຈົ້າພຣະນາມວ່າໂຄຕະມະ

[໑໐] ພິກຂຸທັງຫຼາຍ ກ່ອນແຕ່ຕັດສະຣູ້ ເມື່ອເຮົາເປັນໂພທິສັດຍັງບໍ່ໄດ້ຕັດສະຣູ້ ໄດ້ມີຄວາມຄິດຄຳນຶງແນວນີ້ວ່າ ໂລກນີ້ເຖິງຄວາມຄັບແຄ້ນ ຈຶ່ງເກີດ ແກ່ ຕາຍ ຈຸຕິ ແລະ ອຸບັດ ກໍບຸກຄົນບໍ່ຮູ້ອຸບາຍສະບັດອອກຈາກທຸກ ຄື ຊະຣາແລະມໍລະນະນີ້ ເມື່ອໃດຈຶ່ງຈະພົ້ນຈາກທຸກ ຄືຊະຣາແລະມໍລະນະນີ້ໄດ້

ເຮົານັ້ນ ໄດ້ມີຄວາມຄິດຄຳນຶງແນວນີ້ວ່າ ເມື່ອອັນໃດມີ ຊະຣາແລະມໍລະນະຈຶ່ງມີ ຍ້ອນອັນໃດ ເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ ຍ້ອນມະນະສິການໂດຍແຍບຄາຍ ຈຶ່ງໄດ້ຮູ້ແຈ້ງດ້ວຍປັນຍາວ່າ ເມື່ອຊາດມີ ຊະຣາແລະມໍລະນະຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ

ຈາກນັ້ນ ຈຶ່ງດຳຣິວ່າ ເມື່ອອັນໃດມີ ຊາດຈຶ່ງມີ ฯลฯ ພົບ ฯลฯ ອຸປາທານ ฯลฯ ຕັນຫາ ฯลฯ ເວທະນາ ฯลฯ ຜັດສະ ฯลฯ ສະລາຍະຕະນະ ฯลฯ ນາມຮູບ ฯลฯ ວິນຍານ ฯลฯ ສັງຂານທັງຫຼາຍຈຶ່ງມີ ຍ້ອນອັນໃດ? ເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນມະນະສິການໂດຍແຍບຄາຍ ຈຶ່ງໄດ້ຮູ້ແຈ້ງດ້ວຍປັນຍາວ່າ ເມື່ອອະວິດຊາມີ ສັງຂານທັງຫຼາຍຈຶ່ງມີ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ

ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ฯลฯ ດັ່ງພັນລະນາມານີ້ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ຈັກຂຸ ຍານ ປັນຍາ ວິດຊາ ແສງສະຫວ່າງໃນທຳທັງຫຼາຍທີ່ບໍ່ເຄີຍ ໄດ້ຟັງມາກ່ອນໄດ້ເກີດຂຶ້ນແກ່ເຮົາວ່າ ສະມຸໄທ ສະມຸໄທ

ຈາກນັ້ນ ຈຶ່ງດຳຣິວ່າ ເມື່ອອັນໃດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ ຍ້ອນອັນໃດດັບຊະຣາແລະມໍລະນະຈຶ່ງດັບ ຍ້ອນມະນະສິການໂດຍແຍບຄາຍ ຈຶ່ງໄດ້ຮູ້ແຈ້ງດ້ວຍປັນຍາວ່າ ເມື່ອຊາດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ ຍ້ອນຊາດດັບ ຊະຣາແລະມໍລະນະຈຶ່ງດັບ

ຈາກນັ້ນ ຈຶ່ງດຳຣິວ່າ ເມື່ອອັນໃດບໍ່ມີ ຊາດຈຶ່ງບໍ່ມີ ฯลฯ ພົບ ฯลฯ ອຸປາທານ ฯลฯ ຕັນຫາ ฯลฯ ເວທະນາ ฯลฯ ຜັດສະ ฯลฯ ສະລາຍະຕະນະ ฯลฯ ນາມຮູບ ฯลฯ ວິນຍານ ฯลฯ ສັງຂານ ທັງຫຼາຍຈຶ່ງບໍ່ມີ ຍ້ອນອັນໃດດັບ ສັງຂານຈຶ່ງດັບ ຍ້ອນມະນະສິການໂດຍແຍບ

ຄາຍ ຈຶ່ງໄດ້ຮູ້ແຈ້ງດ້ວຍປັນຍາວ່າ ເມື່ອອະວິດຊາບໍ່ມີ ສັງຂານທັງຫຼາຍຈຶ່ງບໍ່ມີ ຍ້ອນອະວິດຊາດັບສັງຂານຈຶ່ງດັບ

ອັນໜຶ່ງ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ຯລຯ ດັ່ງພັນລະນາມານີ້ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການແນວນີ້

ພິກຂຸທັງຫຼາຍ ຈັກຂຸ ຍານ ປັນຍາ ວິດຊາ ແສງສະຫວ່າງໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນໄດ້ເກີດຂຶ້ນແກ່ເຮົາວ່າ ນິໂຣດ ນິໂຣດ

**ໂຄຕະມະສູດທີ ໑໐ ຈົບ**

**ພຸດທະວັກທີ່ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື

# ໔. ອາຫາຣະວັກ

## ໝວດວ່າດ້ວຍອາຫານ

# ໑. ອາຫານສູດ

## ວ່າດ້ວຍອາຫານ

[໑໑] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ອາຫານ ໔ ແນວນີ້ ເປັນໄປເພື່ອການດໍາລົງຢູ່ຂອງໝູ່ສັດຜູ້ເກີດແລ້ວ ຫຼື ເພື່ອອະນຸເຄາະໝູ່ສັດຜູ້ສະແຫວງຫາທີ່ເກີດ

ອາຫານ ໔ ແນວ ອັນໃດແດ່? ຄື

໑. ກະວະລິງກາຣາຫານ (ອາຫານຄືຄໍາເຂົ້າ) ທີ່ຫຍາບຫຼືລະອຽດ
໒. ຜັດສາຫານ (ອາຫານຄືຜັດສະ)
໓. ມະໂນສັນເຈຕະນາຫານ (ອາຫານຄືມະໂນສັນເຈຕະນາ)
໔. ວິນຍານາຫານ (ອາຫານຄືວິນຍານ)

ອາຫານ ໔ ແນວນີ້ ເປັນໄປເພື່ອການດໍາລົງຢູ່ຂອງໝູ່ສັດຜູ້ເກີດແລ້ວ ຫຼື ເພື່ອອະນຸເຄາະໝູ່ສັດຜູ້ສະແຫວງຫາທີ່ເກີດ

ອາຫານ ໔ ແນວນີ້ ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກໍາເນີດ ມີອັນໃດ? ເປັນແດນເກີດ

ອາຫານ ໔ ແນວນີ້ ມີຕັນຫາເປັນເຫດ ມີຕັນຫາເປັນເຫດເກີດ ມີຕັນຫາເປັນກໍາເນີດ ມີຕັນຫາເປັນແດນເກີດ

ອັນໜຶ່ງ ຕັນຫານີ້ ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກໍາເນີດ ມີອັນໃດ? ເປັນແດນເກີດ

ຕັນຫາມີເວທະນາເປັນເຫດ ມີເວທະນາເປັນເຫດເກີດ ມີເວທະນາເປັນກໍາເນີດ ມີເວທະນາເປັນແດນເກີດ

ເວທະນານີ້ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ

ເວທະນາມີຜັດສະເປັນເຫດ ມີຜັດສະເປັນເຫດເກີດ ມີຜັດສະເປັນກຳເນີດ ມີຜັດສະເປັນແດນເກີດ

ຜັດສະນີ້ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດເປັນແດນເກີດ

ຜັດສະມີສະລາຍະຕະນະເປັນເຫດ ມີສະລາຍະຕະນະເປັນເຫດເກີດ ມີສະລາຍະຕະນະເປັນກຳເນີດ ມີສະລາຍະຕະນະເປັນແດນເກີດ

ສະລາຍະຕະນະນີ້ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ

ສະລາຍະຕະນະມີນາມຮູບເປັນເຫດ ມີນາມຮູບເປັນເຫດເກີດ ມີນາມຮູບເປັນກຳເນີດ ມີນາມຮູບເປັນແດນເກີດ

ນາມຮູບນີ້ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດເປັນແດນເກີດ

ນາມຮູບມີວິນຍານເປັນເຫດ ມີວິນຍານເປັນເຫດເກີດ ມີວິນຍານເປັນກຳເນີດ ມີວິນຍານເປັນແດນເກີດ

ວິນຍານນີ້ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດເປັນແດນເກີດ

ວິນຍານມີສັງຂານເປັນເຫດ ມີສັງຂານເປັນເຫດເກີດ ມີສັງຂານເປັນກຳເນີດ ມີສັງຂານເປັນແດນເກີດ

ອັນໜຶ່ງ ສັງຂານເຫຼົ່ານີ້ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ

ສັງຂານທັງຫຼາຍມີອະວິດຊາເປັນເຫດ ມີອະວິດຊາເປັນເຫດເກີດ ມີອະວິດຊາເປັນກຳເນີດ ມີອະວິດຊາເປັນແດນເກີດ

ພິກຂຸທັງຫຼາຍ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ດັ່ງພັນລະນາມານີ້ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ອັນໜຶ່ງ ຍ້ອນອະວິດຊານັ້ນ ດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ຯລຯ ດັ່ງພັນລະນາມານີ້ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

**ອາຫາຣະສູດທີ ໑ ຈົບ**

# ໔. ໂມລິຍະຜັກຄຸນະສູດ

## ວ່າດ້ວຍພຣະໂມລິຍະຜັກຄຸນະ

[໑໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ອາຫານ ໔ ແນວນີ້ ເປັນໄປເພື່ອການດຳລົງຢູ່ຂອງໝູ່ສັດຜູ້ເກີດແລ້ວ ຫຼື ເພື່ອອະນຸເຄາະໝູ່ສັດຜູ້ສະແຫວງຫາທີ່ເກີດ

ອາຫານ ໔ ແນວ ອັນໃດແດ່ ຄື

໑. ກະວະລິງກາຣາຫານທີ່ຫຍາບຫຼືລະອຽດ
໒. ຜັດສາຫານ
໓. ມະໂນສັນເຈຕະນາຫານ
໔. ວິນຍານາຫານ

ອາຫານ ໔ ແນວນີ້ ເປັນໄປເພື່ອການດຳລົງຢູ່ຂອງໝູ່ສັດຜູ້ເກີດແລ້ວ ຫຼື ເພື່ອອະນຸເຄາະໝູ່ສັດຜູ້ສະແຫວງຫາທີ່ເກີດ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະໂມລິຍະຜັກຄຸນະໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ໃຜນໍ? ຍ່ອມກືນກິນວິນຍານາຫານ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບວ່າ ບັນຫານີ້ບໍ່ສົມຄວນຖາມ ເຮົາບໍ່ໄດ້ກ່າວວ່າ ຍ່ອມກືນກິນ ຖ້າເຮົາເພິ່ງກ່າວວ່າ ຍ່ອມກືນກິນ ໃນຄຳກ່າວນັ້ນ ບັນຫາທີ່ສົມຄວນຖາມກໍຄື ຂ້າແດ່ພຣະອົງຜູ້ຈະເລີນ ໃຜນໍ? ຍ່ອມກືນກິນ ເມື່ອເຮົາບໍ່ໄດ້ກ່າວແນວນັ້ນ ຜູ້ທີ່ຖາມແນວນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ວິນຍານາຫານມີເພື່ອອັນໃດ ບັນຫາຂອງຜູ້ນັ້ນຈຶ່ງເປັນບັນຫາທີ່ສົມຄວນຖາມ ໃນບັນຫານັ້ນ ຄຳຕອບທີ່ສົມຄວນຄື ວິນຍານາຫານເປັນປັດໄຈເພື່ອເກີດໃນພົບໃໝ່ຕໍ່ໄປ ເມື່ອວິນຍານາຫານນັ້ນ ເກີດແລ້ວ ສະລາຍະຕະນະຈຶ່ງມີ ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ

ຂ້າແດ່ ພຣະອົງຜູ້ຈະເລີນ ໃຜນໍ? ຍ່ອມຖືກຕ້ອງ

ບັນຫານີ້ບໍ່ສົມຄວນຖາມແນວນັ້ນ ເຮົາບໍ່ໄດ້ກ່າວວ່າ ຍ່ອມຖືກຕ້ອງ ຖ້າເຮົາເພິ່ງກ່າວວ່າ ຍ່ອມຖືກຕ້ອງໃນຄໍາກ່າວນັ້ນ ບັນຫາທີ່ສົມຄວນຖາມກໍຄື ຂ້າແດ່ ພຣະອົງຜູ້ຈະເລີນ ໃຜນໍຍ່ອມ ຖືກຕ້ອງ ເມື່ອເຮົາບໍ່ໄດ້ກ່າວແນວນັ້ນ ຜູ້ທີ່ຖາມແນວນີ້ວ່າ ຂ້າແດ່ ພຣະອົງ ຜູ້ຈະເລີນ ຍ້ອນອັນໃດເປັນປັດໄຈ ຜັດສະຈຶ່ງມີ ບັນຫາຂອງຜູ້ນັ້ນ ຈຶ່ງເປັນບັນຫາທີ່ສົມຄວນ ຖາມໃນບັນຫານັ້ນ ຄໍາຕອບທີ່ສົມຄວນຄື ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈເວທະນາຈຶ່ງມີ

ຂ້າແດ່ ພຣະອົງຜູ້ຈະເລີນ ໃຜນໍ? ຍ່ອມສະເຫວີຍອາລົມ

ບັນຫານີ້ບໍ່ສົມຄວນຖາມແນວນັ້ນ ເຮົາບໍ່ໄດ້ກ່າວວ່າ ຍ່ອມສະເຫວີຍອາລົມ ຖ້າເຮົາເພິ່ງກ່າວວ່າ ຍ່ອມສະເຫວີຍອາລົມ ໃນຄໍາກ່າວນັ້ນ ບັນຫາທີ່ສົມຄວນຖາມກໍຄື ຂ້າແດ່ ພຣະອົງຜູ້ຈະເລີນໃຜນໍ? ຍ່ອມສະເຫວີຍອາລົມ ເມື່ອເຮົາບໍ່ໄດ້ກ່າວແນວນັ້ນ ຜູ້ທີ່ຖາມແນວນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນອັນໃດ? ເປັນປັດໄຈ ເວທະນາຈຶ່ງມີ ບັນຫາຂອງຜູ້ນັ້ນຈຶ່ງເປັນບັນຫາທີ່ສົມຄວນຖາມໃນບັນຫານັ້ນ ຄໍາຕອບທີ່ສົມຄວນຄື ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ

ຂ້າແດ່ ພຣະອົງຜູ້ຈະເລີນ ໃຜນໍ? ຍ່ອມທະຍານຢາກ

ບັນຫານີ້ບໍ່ສົມຄວນຖາມແນວນັ້ນ ເຮົາບໍ່ໄດ້ກ່າວວ່າ ຍ່ອມທະຍານຢາກ ຖ້າເຮົາເພິ່ງກ່າວວ່າ ຍ່ອມທະຍານຢາກ ໃນຄໍາກ່າວນັ້ນ ບັນຫາທີ່ສົມຄວນຖາມກໍຄື ຂ້າແດ່ ພຣະອົງຜູ້ຈະເລີນໃຜນໍຍ່ອມທະຍານຢາກ ເມື່ອເຮົາບໍ່ໄດ້ກ່າວແນວນີ້ ຜູ້ທີ່ຖາມແນວນີ້ ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນອັນໃດ? ເປັນປັດໄຈ ຕັນຫາຈຶ່ງມີ ບັນຫາຂອງຜູ້ນັ້ນ ຈຶ່ງເປັນບັນຫາທີ່ສົມຄວນຖາມໃນບັນຫານັ້ນ ຄໍາຕອບທີ່ສົມຄວນຄື ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ

ຂ້າແດ່ ພຣະອົງຜູ້ຈະເລີນ ໃຜນໍ? ຍ່ອມຖືໝັ້ນ

ບັນຫານີ້ບໍ່ສົມຄວນຖາມແນວນັ້ນ ເຮົາບໍ່ໄດ້ກ່າວວ່າ ຍ່ອມຖືໝັ້ນ ຖ້າເຮົາເພິ່ງກ່າວວ່າ ຍ່ອມຖືໝັ້ນ ໃນຄໍາກ່າວນັ້ນ ບັນຫາທີ່ສົມຄວນຖາມກໍຄື ຂ້າແດ່ ພຣະອົງຜູ້ຈະເລີນ ໃຜນໍ? ຍ່ອມຖືໝັ້ນ ເມື່ອເຮົາບໍ່ໄດ້ກ່າວແນວນີ້ ຜູ້ທີ່ຖາມແນວນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນອັນໃດ? ເປັນປັດໄຈ ອຸປາທານຈຶ່ງມີ ບັນຫາຂອງຜູ້ນັ້ນ ຈຶ່ງເປັນບັນຫາທີ່ສົມຄວນຖາມ ໃນບັນຫານັ້ນ ຄໍາຕອບທີ່ສົມຄວນຄື ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ຜັກຄຸນະ ກໍຍ້ອນຜັດສະຍະຕະນະທັງ ໖ ດັບໄປບໍ່ເຫຼືອດ້ວຍວິຣາຄະ ຜັດສະຈຶ່ງດັບ ຍ້ອນຜັດສະດັບ ເວທະນາຈຶ່ງດັບ ຍ້ອນເວທະນາດັບ ຕັນຫາຈຶ່ງດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຍ້ອນພົບດັບ ຊາດຈຶ່ງດັບ ຍ້ອນຊາດດັບ ຊະຣາມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງດັບ ຄວາມດັບ ແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

**ໂມລິຍະຜັກຄຸນະສູດທີ ໘ ຈົບ**

## ໙. ສະມະນະພາມມະນະສູດ

### ວ່າດ້ວຍສະມະນະພາມ

[໑໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ

ບໍ່ຮູ້ແຈ້ງຊາດ ຯລຯ ບໍ່ຮູ້ແຈ້ງພົບ ຯລຯ ອຸປາທານ ຯລຯ ຕັນຫາ ຯລຯ ເວທະນາ ຯລຯ ຜັດສະ ຯລຯ ສະລາຍະຕະນະ ຯລຯ ນາມຮູບ ຯລຯ ວິນຍານ ຯລຯ

ບໍ່ຮູ້ແຈ້ງສັງຂານທັງຫຼາຍ ບໍ່ຮູ້ແຈ້ງຄວາມເກີດແຫ່ງສັງຂານ ບໍ່ຮູ້ແຈ້ງຄວາມດັບແຫ່ງສັງຂານ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ສະມະນະຫຼືພາມເຫຼົ່ານັ້ນ ບໍ່ຈັດວ່າເປັນສະມະນະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ແລະ ທ່ານເຫຼົ່ານັ້ນກໍບໍ່ເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ແລະ ປະໂຫຍດຂອງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ຮູ້ແຈ້ງຊະຣາແລະມໍລະນະ ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະ ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ

ຮູ້ແຈ້ງຊາດ ຯລຯ ຮູ້ແຈ້ງພົບ ຯລຯ ອຸປາທານ ຯລຯ ຕັນຫາ ຯລຯ ເວທະນາ ຯລຯ ຜັດສະ ຯລຯ ສະລາຍະຕະນະ ຯລຯ ນາມຮູບ ຯລຯ ວິນຍານ ຯລຯ

ຮູ້ແຈ້ງສັງຂານທັງຫຼາຍ ຮູ້ແຈ້ງຄວາມເກີດແຫ່ງສັງຂານ ຮູ້ແຈ້ງຄວາມດັບແຫ່ງສັງຂານ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ສະມະນະຫຼືພາມເຫຼົ່ານັ້ນຈັດວ່າ ເປັນສະມະນະໃນໝູ່ສະມະນະ ແລະ ຈັດວ່າເປັນພາມໃນໝູ່ພາມ ແລະທ່ານເຫຼົ່ານັ້ນ ກໍເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ແລະ ປະໂຫຍດຂອງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

**ສະມະນະພາມມະນະສູດທີ ໓ ຈົບ**

# ໔. ທຸຕິຍະສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໔

[໑໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ฯລฯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງທໍາເຫຼົ່ານີ້ ບໍ່ຮູ້ແຈ້ງຄວາມເກີດແຫ່ງທໍາເຫຼົ່ານີ້ ບໍ່ຮູ້ແຈ້ງຄວາມດັບແຫ່ງທໍາເຫຼົ່ານີ້ ບໍ່ຮູ້ແຈ້ງປະຕິປະທາ ທີ່ໃຫ້ເຖິງຄວາມດັບແຫ່ງທໍາເຫຼົ່ານີ້

ບໍ່ຮູ້ແຈ້ງທໍາເຫຼົ່າໃດ? ບໍ່ຮູ້ແຈ້ງຄວາມເກີດແຫ່ງທໍາເຫຼົ່າໃດ? ບໍ່ຮູ້ແຈ້ງຄວາມດັບແຫ່ງທໍາເຫຼົ່າໃດ? ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທໍາເຫຼົ່າໃດ?

ຄື ບໍ່ຮູ້ແຈ້ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງຊາດ ฯລฯ

ບໍ່ຮູ້ແຈ້ງພົບ ฯລฯ ອຸປາທານ ฯລฯ ຕັນຫາ ฯລฯ ເວທະນາ ฯລฯ ຜັດສະ ฯລฯ ສະລາຍະຕະນະ ฯລฯ ນາມຮູບ ฯລฯ ວິນຍານ ฯລฯ

ບໍ່ຮູ້ແຈ້ງສັງຂານທັງຫຼາຍ ບໍ່ຮູ້ແຈ້ງຄວາມເກີດແຫ່ງສັງຂານ ບໍ່ຮູ້ແຈ້ງຄວາມດັບແຫ່ງສັງຂານ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ບໍ່ຮູ້ແຈ້ງທໍາເຫຼົ່ານີ້ ບໍ່ຮູ້ແຈ້ງຄວາມເກີດແຫ່ງທໍາເຫຼົ່ານີ້ ບໍ່ຮູ້ແຈ້ງຄວາມດັບແຫ່ງທໍາເຫຼົ່ານີ້ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທໍາເຫຼົ່ານີ້

ສະມະນະຫຼືພາມເຫຼົ່ານັ້ນ ບໍ່ຈັດວ່າເປັນສະມະນະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ແລະທ່ານເຫຼົ່ານັ້ນ ກໍບໍ່ເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ແລະປະໂຫຍດຂອງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ຮູ້ແຈ້ງທຳເຫຼົ່ານີ້ ຮູ້ແຈ້ງຄວາມເກີດແຫ່ງທຳເຫຼົ່ານີ້ ຮູ້ແຈ້ງຄວາມດັບແຫ່ງທຳເຫຼົ່ານີ້ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທຳເຫຼົ່ານີ້

ຮູ້ແຈ້ງທຳເຫຼົ່າໃດ? ຮູ້ແຈ້ງຄວາມເກີດແຫ່ງທຳເຫຼົ່າໃດ? ຮູ້ແຈ້ງຄວາມດັບແຫ່ງທຳເຫຼົ່າໃດ? ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທຳເຫຼົ່າໃດ?

ຄື ຮູ້ແຈ້ງຊະຣາແລະມໍລະນະ ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະ ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ ຮູ້ແຈ້ງຊາດ ฯລฯ

ຮູ້ແຈ້ງພົບ ฯລฯ ອຸປາທານ ฯລฯ ຕັນຫາ ฯລฯ ເວທະນາ ฯລฯ ຜັດສະ ฯລฯ ສະລາຍະຕະນະ ฯລฯ ນາມຮູບ ฯລฯ ວິນຍານ ฯລฯ

ຮູ້ແຈ້ງສັງຂານທັງຫຼາຍ ຮູ້ແຈ້ງຄວາມເກີດແຫ່ງສັງຂານ ຮູ້ແຈ້ງຄວາມດັບແຫ່ງສັງຂານ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ຮູ້ແຈ້ງທຳເຫຼົ່ານີ້ ຮູ້ແຈ້ງຄວາມເກີດແຫ່ງທຳເຫຼົ່ານີ້ ຮູ້ແຈ້ງຄວາມດັບແຫ່ງທຳເຫຼົ່ານີ້ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທຳເຫຼົ່ານີ້

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່ານັ້ນຈັດວ່າເປັນສະມະນະໃນໝູ່ສະມະນະ ແລະຈັດວ່າເປັນພາມໃນໝູ່ພາມ ແລະທ່ານເຫຼົ່ານັ້ນ ກໍໄດ້ເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະແລະປະໂຫຍດຂອງຄວາມເປັນພາມ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

**ທຸຕິຍະສະມະນະພາມມະນະສູດທີ ໔ ຈົບ**

# ໕. ກັດຈານະໂຄດຕະສູດ

## ວ່າດ້ວຍພຣະກັດຈານະໂຄດ

[໑໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ฯລฯ ເຂດເມືອງສາວັດຖີ

ຄັ້ງນັ້ນ ທ່ານພຣະກັດຈານະໂຄດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ສຳມາທິດຖິ ສຳມາທິດຖິ ນີ້ ດ້ວຍເຫດພຽງທໍ່ໃດນໍ? ຈຶ່ງຮຽກວ່າສຳມາທິດຖິ

ກັດຈານະ ສ່ວນຫຼາຍໂລກນີ້ອາໄສບ່ອນສຸດ ໒ ຢ່າງ ຄື (໑) ຄວາມມີ (໒) ຄວາມບໍ່ມີ

ກໍເມື່ອບຸກຄົນເຫັນຄວາມເກີດຂຶ້ນຂອງໂລກ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ຄວາມບໍ່ມີໃນໂລກກໍບໍ່ມີ ເມື່ອບຸກຄົນເຫັນຄວາມດັບແຫ່ງໂລກດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ຄວາມມີໃນໂລກກໍບໍ່ມີ

ກັດຈານະ ສ່ວນຫຼາຍໂລກນີ້ຍັງພົວພັນຢູ່ດ້ວຍອຸບາຍ ແລະ ຄວາມຍຶດໝັ້ນອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນແລະນອນຈົມ ແຕ່ອະຣິຍະສາວົກບໍ່ເຂົ້າໄປຖືໝັ້ນອຸບາຍ ແລະ ຄວາມຍຶດໝັ້ນ ອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນແລະນອນຈົມ ວ່າ ອັດຕາຂອງເຮົາບໍ່ເຄືອບແຄງບໍ່ສົງໄສວ່າ ທຸກນັ້ນ ເມື່ອເກີດຂຶ້ນ ຍ່ອມເກີດຂຶ້ນ ທຸກເມື່ອດັບ ຍ່ອມດັບໄປ ອະຣິຍະສາວົກນັ້ນມີຍານຢັ່ງຮູ້ໃນເລື້ອງນີ້ໂດຍບໍ່ຕ້ອງເຊື່ອຜູ້ອື່ນເລີຍ

ກັດຈານະ ດ້ວຍເຫດພຽງທໍ່ນີ້ ຈັດວ່າເປັນສຳມາທິດຖິ

ບ່ອນສຸດຢ່າງທີ ໑ ນີ້ ຄື ສິ່ງທັງປວງມີຢູ່ ບ່ອນສຸດຢ່າງທີ ໒ ນີ້ ຄື ສິ່ງທັງປວງບໍ່ມີຢູ່ ຕະຖາຄົດບໍ່ເຂົ້າໄປໃກ້ບ່ອນສຸດທັງ ໒ ຢ່າງນີ້ ຍ່ອມສະແດງທຳໂດຍສາຍກາງວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ໆລໆ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ໆລໆ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

**ກັດຈານະໂຄດຕະສູດທີ ໕ ຈົບ**

# ໖. ທຳມະກະຖິກະສູດ

## ວ່າດ້ວຍພຣະທຳມະກະຖຶກ

[໑໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໆລໆ ເຂດເມືອງສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ຄັນແລ້ວໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ພິກຂຸເປັນທຳມະກະຖຶກ ພິກຂຸຜູ້ເປັນທຳມະກະຖຶກດ້ວຍເຫດພຽງທໍ່ໃດນໍ? ພິກຂຸນັ້ນຈຶ່ງຊື່ວ່າເປັນທຳມະກະຖຶກ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸທັງຫຼາຍ ຫາກພິກຂຸສະແດງທຳເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຊະຣາແລະມໍລະນະ ຄວນຮຽກໄດ້ວ່າ ພິກຂຸເປັນທຳມະກະຖຶກ

ຫາກພິກຂຸ ເປັນຜູ້ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຊະຣາແລະມໍລະນະ ຄວນຮຽກໄດ້ ວ່າ ພິກຂຸຜູ້ປະຕິບັດທຳສົມຄວນແກ່ທຳ

ຫາກພິກຂຸ ເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ຍ້ອນບໍ່ຢຶດໝັ້ນຖືໝັ້ນຊະຣາແລະມໍລະນະ ຄວນຮຽກໄດ້ວ່າ ພິກຂຸຜູ້ບັນລຸນິບພານໃນປັດຈຸບັນ

ຫາກພິກຂຸ ສະແດງທຳເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຊາດ ຯລຯ ພົບ ຯລຯ ອຸປາທານ ຯລຯ ຕັນຫາ ຯລຯ ເວທະນາ ຯລຯ ຜັດສະ ຯລຯ ສະລາຍະຕະນະ ຯລຯ ນາມຮູບ ຯລຯ ວິນຍານ ຯລຯ ສັງຂານທັງຫຼາຍ ຯລຯ ອະວິດຊາ ຄວນຮຽກໄດ້ວ່າ ພິກຂຸເປັນທຳມະກະຖຶກ

ຫາກພິກຂຸເປັນຜູ້ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບອະວິດຊາ ຄວນຮຽກໄດ້ວ່າ ພິກຂຸຜູ້ປະຕິບັດທຳສົມຄວນແກ່ທຳ

ຫາກພິກຂຸ ເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ຍ້ອນບໍ່ຢຶດໝັ້ນຖືໝັ້ນອະວິດຊາ ຄວນຮຽກໄດ້ວ່າ ພິກຂຸຜູ້ບັນລຸນິບພານໃນປັດຈຸບັນ

**ທຳມະກະຖຶກະສູດທີ ໖ ຈົບ**

# ໗. ອະເຈລະກັດສະປະສູດ

## ວ່າດ້ວຍປະຣິພາຊົກຊື່ອະເຈລະກັດສະປະ

[໑໗] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາດຊະຄຶ ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດໃນເມືອງຣາຊະຄຶ ອະເຈລະກັດສະປະໄດ້ເຫັນພຣະຜູ້ມີພຣະພາກເຈົ້າກຳລັງສະເດັດມາແຕ່ໄກ ຈຶ່ງໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່

ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າພະເຈົ້າ ຂໍຖາມເຫດບາງຢ່າງ ກັບທ່ານພຣະໂຄດົມ ຖ້າທ່ານພຣະໂຄດົມເປີດໂອກາດເພື່ອຕອບບັນຫາແກ່ຂ້າພະເຈົ້າ

ກັດສະປະ ຍັງບໍ່ແມ່ນເວລາທີ່ຈະຕອບບັນຫາຂອງທ່ານ ເຮົາກຳລັງເຂົ້າໄປສູ່ບໍລິເວນບ້ານ

ແມ່ນເທື່ອທີ ໒ ອະເຈລະກັດສະປະ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າພະເຈົ້າ ຂໍຖາມເຫດບາງຢ່າງ ກັບທ່ານພຣະໂຄດົມ ຖ້າທ່ານພຣະໂຄດົມເປີດໂອກາດ ເພື່ອຕອບບັນຫາແກ່ຂ້າພະເຈົ້າ

ກັດສະປະ ຍັງບໍ່ແມ່ນເວລາທີ່ຈະຕອບບັນຫາຂອງທ່ານ ເຮົາກຳລັງເຂົ້າໄປສູ່ບໍລິເວນບ້ານ

ແມ່ນເທື່ອທີ ໓ ຯລຯ

ກັດສະປະ ຯລຯ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນັ້ນແລ້ວ ອະເຈລະກັດສະປະໄດ້ຂາບທູນວ່າ ຂ້າພະເຈົ້າບໍ່ປະສົງທີ່ຈະຖາມທ່ານພຣະໂຄດົມຫຼາຍປານໃດດອກ

ກັດສະປະ ຈົ່ງຖາມບັນຫາທີ່ທ່ານປະສົງມາເທີ້ນ

ທ່ານພຣະໂຄດົມ ທຸກເປັນສິ່ງທີ່ຕົນເຮັດເອງແມ່ນບໍ່?

ຢ່າກ່າວແນວນັ້ນ ກັດສະປະ

ທ່ານພຣະໂຄດົມ ທຸກເປັນສິ່ງທີ່ຄົນອື່ນເຮັດໃຫ້ແມ່ນບໍ່?

ຢ່າກ່າວແນວນັ້ນ ກັດສະປະ

ທ່ານພຣະໂຄດົມ ທຸກເປັນສິ່ງທີ່ຕົນເຮັດເອງດ້ວຍ ແລະ ຄົນອື່ນເຮັດໃຫ້ແມ່ນບໍ່?

ຢ່າກ່າວແນວນັ້ນ ກັດສະປະ

ທ່ານພຣະໂຄດົມ ທຸກເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະຄົນອື່ນເຮັດໃຫ້ກໍບໍ່ແມ່ນບໍ

ຢ່າກ່າວແນວນັ້ນ ກັດສະປະ

ທ່ານພຣະໂຄດົມ ທຸກບໍ່ມີແມ່ນບໍ່?

ກັດສະປະ ທຸກບໍ່ມີບໍ່ແມ່ນ ທຸກມີຢູ່

ຖ້າເປັນແນວນັ້ນ ທ່ານພຣະໂຄດົມ ບໍ່ຮູ້ບໍ່ເຫັນທຸກແມ່ນບໍ່?
ກັດສະປະ ເຮົາບໍ່ຮູ້ບໍ່ເຫັນທຸກບໍ່ແມ່ນ ເຮົານີ້ທີ່ຮູ້ທີ່ເຫັນທຸກໂດຍແທ້

ເມື່ອຂ້າພະເຈົ້າທູນຖາມວ່າ ທ່ານພຣະໂຄດົມ ທຸກເປັນສິ່ງທີ່ຕົນເຮັດເອງແມ່ນບໍ່?
ທ່ານຕັດວ່າ ຢ່າກ່າວແນວນັ້ນ ກັດສະປະ

ເມື່ອຂ້າພະເຈົ້າທູນຖາມວ່າ ທ່ານພຣະໂຄດົມ ທຸກເປັນສິ່ງທີ່ຄົນອື່ນເຮັດໃຫ້ແມ່ນບໍ່?
ທ່ານຕັດວ່າ ຢ່າກ່າວແນວນັ້ນ ກັດສະປະ
ເມື່ອຂ້າພະເຈົ້າທູນຖາມວ່າ ທ່ານພຣະໂຄດົມ ທຸກເປັນສິ່ງທີ່ຕົນເຮັດເອງແລະຄົນອື່ນເຮັດໃຫ້ແມ່ນບໍ່?
ທ່ານຕັດວ່າ ຢ່າກ່າວແນວນັ້ນ ກັດສະປະ
ເມື່ອຂ້າພະເຈົ້າທູນຖາມວ່າ ທ່ານພຣະໂຄດົມ ທຸກເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນບໍ?
ທ່ານຕັດວ່າ ຢ່າກ່າວແນວນັ້ນ ກັດສະປະ
ເມື່ອຂ້າພະເຈົ້າທູນຖາມວ່າ ທ່ານພຣະໂຄດົມ ທຸກບໍ່ມີແມ່ນບໍ?
ທ່ານຕັດວ່າ ກັດສະປະ ທຸກບໍ່ມີບໍ່ແມ່ນ ທຸກມີຢູ່
ເມື່ອຂ້າພະເຈົ້າທູນຖາມວ່າ ຖ້າແນວນັ້ນ ທ່ານພຣະໂຄດົມ ບໍ່ຮູ້ບໍ່ເຫັນທຸກແມ່ນບໍ່?
ທ່ານຕັດວ່າ ກັດສະປະ ເຮົາບໍ່ຮູ້ບໍ່ເຫັນທຸກບໍ່ແມ່ນ ເຮົານີ້ທີ່ຮູ້ທີ່ເຫັນທຸກໂດຍແທ້

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດຕັດບອກທຸກແກ່ຂ້າພະເຈົ້າດ້ວຍເທີ້ນ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຸກແກ່ຂ້າພະເຈົ້າດ້ວຍເທີ້ນ

ກັດສະປະ ເມື່ອເບື້ອງຕົ້ນມີ (ວາທະ) ວ່າ ຜູ້ນັ້ນເຮັດ ຜູ້ນັ້ນສະເຫວີຍ (ທຸກ) ຕໍ່ມາ ມີວາທະວ່າ ທຸກເປັນສິ່ງທີ່ຕົນເຮັດເອງ ອັນນັ້ນ ເປັນສັດສະຕະທິດຖິ (ຄວາມເຫັນວ່າທ່ຽງ) ເມື່ອມີຜູ້ຖືກເວທະນາສຽບແທງເບື້ອງຕົ້ນວ່າ ຄົນອື່ນເຮັດ ຄົນອື່ນເປັນຜູ້ສະເຫວີຍ (ທຸກ) ຕໍ່ມາມີວາທະວ່າ ທຸກຄົນອື່ນເຮັດໃຫ້ ອັນນັ້ນເປັນອຸດເສທະທິດຖິ (ຄວາມເຫັນວ່າຂາດສູນ) ຕະຖາຄົດບໍ່ເຂົ້າໄປໃກ້ບ່ອນສຸດ ໒ ແນວນີ້ ຍ່ອມສະແດງທຳໂດຍສາຍກາງວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ໆລໆ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ອັນໜຶ່ງ ຍ້ອນອະວິດຊານັ້ນດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ໆລໆ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອະເຈລະກັດສະປະໄດ້ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນນ່ວນຫຼາຍ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງປະກາດທຳແຈ້ງຊັດ ໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ຯລຯ ດ້ວຍຕັ້ງໃຈວ່າ ຄົນຕາດີຈັກເຫັນຮູບໄດ້ ຂ້າພຣະອົງນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເພິ່ງໄດ້ບັນພະຊາ ເພິ່ງໄດ້ອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

ກັດສະປະ ຜູ້ເຄີຍເປັນອັນຍະເດຍຣະຖີ ປະສົງຈະບັນພະຊາອຸປະສົມບົດໃນທຳວິໄນນີ້ ຈະຕ້ອງຢູ່ປະຣິວາດ ໔ ເດືອນ ຫຼັງຈາກ ໔ ເດືອນຜ່ານໄປ ສິ້ນສຸດການຢູ່ປະຣິວາດແລ້ວ ເມື່ອພິກຂຸພໍໃຈກໍຈະໃຫ້ບັນພະຊາອຸປະສົມບົດເປັນພິກຂຸໄດ້ ອັນໜຶ່ງ ໃນເລື້ອງນີ້ເຮົາຄຳນຶງເຖິງຄວາມແຕກຕ່າງລະຫວ່າງ ບຸກຄົນໄວ້

ທ່ານກັດສະປະ ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຫາກຜູ້ເຄີຍເປັນອັນຍະເດຍຣະຖີປະສົງ ຈະບັນພະຊາອຸປະສົມບົດໃນທຳວິໄນນີ້ ຈະຕ້ອງຢູ່ປະຣິວາດ ໔ ເດືອນ ຫຼັງຈາກ ໔ ເດືອນຜ່ານໄປ ສິ້ນສຸດການຢູ່ປະຣິວາດແລ້ວ ເມື່ອພິກຂຸພໍໃຈ ຈຶ່ງຈະໃຫ້ບັນພະຊາອຸປະສົມບົດເປັນພິກຂຸ ຂ້າພຣະອົງ ຈັກຂໍຢູ່ປະຣິວາດ ໔ ປີ ຫຼັງຈາກ ໔ ປີ ຜ່ານໄປ ສິ້ນສຸດການຢູ່ປະຣິວາດແລ້ວ ເມື່ອພິກຂຸພໍໃຈ ຈຶ່ງຈະໃຫ້ບັນພະຊາອຸປະສົມບົດເປັນພິກຂຸ ໃຫ້ຂ້າພະອົງເທີ້ນ

ເມື່ອອະເຈລະກັດສະປະ ໄດ້ບັນພະຊາອຸປະສົມບົດໃນສຳນັກພຣະຜູ້ມີພຣະພາກເຈົ້າແລ້ວ ເມື່ອບວດແລ້ວບໍ່ດົນ ໄດ້ຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ບໍ່ດົນປານໃດ ໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດອັນປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ເປັນອັນວ່າ ທ່ານກັດສະປະໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ ດ້ວຍອາການຢ່າງນີ້ແລ

**ອະເຈລະກັດສະປະສູດທີ ໗ ຈົບ**

# ໗. ຕິມະພະຣຸກົກສູດ

## ວ່າດ້ວຍປະຣິພາຊົກຊື່ຕິມພະຣຸກຂະ

[໑໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ຄັ້ງນັ້ນ ປະຣິພາຊົກຊື່ຕິມພະຣຸກຂະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາ ປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນໄດ້ທູນຖາມ ພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ທ່ານພຣະໂຄດົມ ສຸກແລະທຸກເປັນສິ່ງທີ່ຕົນເຮັດເອງແມ່ນບໍ່?
ຢ່າກ່າວແນວນັ້ນ ຕິມພະຣຸກຂະ

ທ່ານພຣະໂຄດົມ ສຸກແລະທຸກເປັນສິ່ງທີ່ຄົນອື່ນເຮັດໃຫ້ແມ່ນບໍ່?
ຢ່າກ່າວແນວນັ້ນ ຕິມພະຣຸກຂະ

ທ່ານພຣະໂຄດົມ ສຸກແລະທຸກ ເປັນສິ່ງທີ່ຕົນເຮັດເອງ ແລະ ເປັນສິ່ງທີ່ຄົນອື່ນເຮັດໃຫ້ແມ່ນບໍ່?
ຢ່າກ່າວແນວນັ້ນ ຕິມພະຣຸກຂະ

ທ່ານພຣະໂຄດົມ ສຸກແລະທຸກເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະຄົນອື່ນເຮັດໃຫ້ກໍບໍ່ແມ່ນບໍ?
ຢ່າກ່າວແນວນັ້ນ ຕິມພະຣຸກຂະ

ທ່ານພຣະໂຄດົມ ສຸກແລະທຸກບໍ່ມີແມ່ນບໍ?
ຕິມພະຣຸກຂະ ສຸກແລະທຸກບໍ່ມີກໍບໍ່ແມ່ນ ເພາະວ່າສຸກແລະທຸກມີຢູ່

ຖ້າແນວນັ້ນ ທ່ານພຣະໂຄດົມ ຍ່ອມບໍ່ຮູ້ບໍ່ເຫັນສຸກແລະທຸກແມ່ນບໍ່?
ຕິມພະຣຸກຂະ ເຮົາບໍ່ຮູ້ເຫັນສຸກແລະທຸກກໍບໍ່ແມ່ນ ເຮົານີ້ທີ່ຮູ້ທີ່ເຫັນສຸກແລະທຸກໂດຍແທ້

ເມື່ອຂ້າພະເຈົ້າທູນຖາມວ່າ ທ່ານພຣະໂຄດົມ ສຸກແລະທຸກເປັນສິ່ງທີ່ຕົນເຮັດເອງແມ່ນບໍ່?
ທ່ານຕັດວ່າ ຢ່າກ່າວແນວນັ້ນ ຕິມພະຣຸກຂະ
ເມື່ອຂ້າພະເຈົ້າທູນຖາມ ວ່າ ທ່ານພຣະໂຄດົມ ສຸກແລະທຸກເປັນສິ່ງທີ່ຄົນອື່ນເຮັດໃຫ້ແມ່ນບໍ່?
ທ່ານຕັດວ່າ ຢ່າກ່າວແນວນັ້ນ ຕິມພະຣຸກຂະ

ເມື່ອຂ້າພະເຈົ້າທູນຖາມວ່າ ທ່ານພຣະໂຄດົມ ສຸກແລະທຸກເປັນສິ່ງທີ່ຕົນເຮັດເອງ ແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ແມ່ນບໍ?

ທ່ານຕັດວ່າ ຢ່າກ່າວແນວນັ້ນ ຕິມພະຣຸກຂະ

ເມື່ອຂ້າພະເຈົ້າທູນຖາມວ່າ ທ່ານພຣະໂຄດົມ ສຸກແລະທຸກເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນບໍ?

ທ່ານຕັດວ່າ ຢ່າກ່າວແນວນັ້ນ ຕິມພະຣຸກຂະ

ເມື່ອຂ້າພະເຈົ້າທູນຖາມວ່າ ທ່ານພຣະໂຄດົມ ສຸກແລະທຸກບໍ່ມີແມ່ນບໍ?

ທ່ານຕັດວ່າ ຕິມພະຣຸກຂະ ສຸກແລະທຸກບໍ່ມີກໍບໍ່ແມ່ນ ເພາະວ່າສຸກແລະທຸກມີຢູ່

ເມື່ອຂ້າພະເຈົ້າທູນຖາມວ່າ ຖ້າເປັນແນວນັ້ນ ທ່ານພຣະໂຄດົມ ຍ່ອມບໍ່ຮູ້ເຫັນສຸກແລະທຸກແມ່ນບໍ?

ທ່ານຕັດວ່າ ຕິມພະຣຸກຂະ ເຮົາບໍ່ຮູ້ເຫັນສຸກແລະທຸກກໍບໍ່ແມ່ນ ເຮົານີ້ທີ່ຮູ້ທີ່ເຫັນສຸກແລະທຸກໂດຍແທ້

ຂໍທ່ານພຣະໂຄດົມໂຜດຕັດບອກສຸກ ແລະ ທຸກແກ່ຂ້າພະເຈົ້າດ້ວຍເທີ້ນ ຂໍທ່ານພຣະໂຄດົມໂຜດສະແດງສຸກ ແລະ ທຸກແກ່ຂ້າພະເຈົ້າດ້ວຍເທີ້ນ

ເມື່ອເບື້ອງຕົ້ນມີວາທະວ່າ ນັ້ນເວທະນາ ຜູ້ນັ້ນສະເຫວີຍເວທະນາ ແຕ່ເຮົາບໍ່ກ່າວແນວນີ້ວ່າ ສຸກແລະທຸກເປັນສິ່ງທີ່ຕົນເຮັດເອງ ເມື່ອບຸກຄົນຖືກເວທະນາສຽດແທງວ່າ ເວທະນາເປັນຢ່າງໜຶ່ງ ບຸກຄົນຜູ້ສະເຫວີຍເວທະນາກໍຢ່າງໜຶ່ງ ທັງເຮົາບໍ່ກ່າວແນວນີ້ວ່າ ສຸກແລະທຸກເປັນສິ່ງທີ່ຄົນອື່ນເຮັດໃຫ້ ຕະຖາຄົດບໍ່ເຂົ້າໄປໃກ້ບ່ອນສຸດ ໒ ແນວນີ້ ຍ່ອມສະແດງທຳໂດຍສາຍກາງວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ຕິມພະຣຸກຂະປະຣິພາຊົກໄດ້ຂາບທູນວ່າ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມໂຜດຊົງຈື່ຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ຕິມພະຣຸກຂະສູດທີ ໗ ຈົບ**

# ໙. ພາລະປັນທິຕະສູດ

## ວ່າດ້ວຍຄົນພານແລະບັນດິດ

[໑໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໆລໆ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ກາຍຂອງຄົນພານນີ້ ຜູ້ຖືກອະວິດຊາຂວາງກັ້ນ ປະກອບດ້ວຍຕັນຫາ ເກີດຂຶ້ນແລ້ວແນວນີ້ ກາຍແລະນາມຮູບພາຍນອກນີ້ ມີຢູ່ທັງ ໔ ສ່ວນ ແນວນີ້ ຍ້ອນອາໄສສ່ວນທັງ ໔ ນັ້ນ ຜັດສະຈຶ່ງມີ ຄົນພານຖືກຜັດສາຍະຕະນະ ໖ ຫຼື ອາຍະຕະນະແນວໃດແນວໜຶ່ງກະທົບເຂົ້າ ຈຶ່ງສະເຫວີຍສຸກແລະທຸກ

ກາຍຂອງບັນດິດນີ້ ຜູ້ຖືກອະວິດຊາຂວາງກັ້ນ ປະກອບດ້ວຍຕັນຫາ ເກີດຂຶ້ນແລ້ວແນວນີ້ ກາຍແລະນາມຮູບພາຍນອກນີ້ ມີຢູ່ທັງ ໔ ສ່ວນແນວນີ້ ຍ້ອນອາໄສສ່ວນທັງ ໔ ນັ້ນ ຜັດສະຈຶ່ງມີ ບັນດິດຖືກຜັດສາຍະຕະນະ ໖ ຫຼື ອາຍະຕະນະແນວໃດແນວໜຶ່ງກະທົບເຂົ້າ ຈຶ່ງສະເຫວີຍສຸກແລະທຸກ

ໃນຊົນ ໔ ຈໍາພວກນັ້ນ ມີອັນໃດ? ເປັນຄວາມແປກກັນ ເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນ ລະຫວ່າງບັນດິດກັບຄົນພານ

ຂ້າແດ່ ພຣະອົງຜູ້ຈະເລີນ ທໍາຂອງພວກຂ້າພຣະອົງ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນໍາ ມີພຣະຜູ້ມີພຣະພາກເຈົ້າເປັນທີ່ເພິ່ງ ຂໍປະທານອະໂຣກາດສະເພາະພຣະຜູ້ມີພຣະພາກເຈົ້າທ່ານັ້ນ ທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພຣະພາສິດນັ້ນໃຫ້ແຈ້ງຊັດໄດ້ ພິກຂຸທັງຫຼາຍ ໄດ້ຟັງຈາກພຣະຜູ້ມີພຣະພາກເຈົ້າແລ້ວ ຈັກຊົງຈໍາໄວ້

ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດໍາຣັດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ຂຶ້ນວ່າ

ກາຍຂອງຄົນພານນີ້ ຜູ້ຖືກອະວິດຊາໃດຫຸ້ມຫໍ່ແລ້ວ ແລະ ປະກອບດ້ວຍຕັນຫາໃດ ເກີດຂຶ້ນແລ້ວ ອະວິດຊານັ້ນເອງ ຄົນພານຍັງລະບໍ່ໄດ້ ແລະ ຕັນຫານັ້ນກໍຍັງບໍ່ໝົດໄປ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນຄົນພານບໍ່ໄດ້ປະພຶດພົມມະຈັນ ເພື່ອຄວາມສິ້ນທຸກໂດຍຖືກຕ້ອງ ຍ້ອນແນວນັ້ນເມື່ອຕາຍໄປ ຄົນພານຈຶ່ງເຂົ້າເຖິງກາຍ ເມື່ອຍັງມີການເຂົ້າເຖິງກາຍ ເຂົາຈຶ່ງບໍ່ພົ້ນໄປຈາກຊາດ

ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເຮົາຈຶ່ງກ່າວວ່າ ເຂົາບໍ່ພົ້ນຈາກທຸກ

ກາຍຂອງບັນດິດນີ້ ຜູ້ຖືກອະວິດຊາໃດຫຸ້ມຫໍ່ແລ້ວ ແລະ ປະກອບດ້ວຍຕັນຫາໃດ ເກີດຂຶ້ນແລ້ວ ອະວິດຊານັ້ນເອງ ບັນດິດລະໄດ້ແລ້ວ ແລະ ຕັນຫານັ້ນກໍໝົດສິ້ນໄປແລ້ວ

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນບັນດິດໄດ້ປະພຶດພົມມະຈັນເພື່ອຄວາມສິ້ນທຸກໂດຍຖືກຕ້ອງ ຍ້ອນແນວນັ້ນ ເມື່ອຕາຍໄປ ບັນດິດຈຶ່ງບໍ່ເຂົ້າເຖິງກາຍ ເມື່ອບໍ່ເຂົ້າເຖິງກາຍ ເຂົາຈຶ່ງພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເຮົາຈຶ່ງກ່າວວ່າ ເຂົາພົ້ນຈາກທຸກ

ພິກຂຸທັງຫຼາຍ ນີ້ເປັນຄວາມແປກກັນ ນີ້ເປັນຄວາມແຕກຕ່າງກັນ ນີ້ເປັນເຫດເຮັດໃຫ້ຕ່າງກັນ ລະຫວ່າງບັນດິດກັບຄົນພານ ກ່າວຄືການຢູ່ປະພຶດພົມມະຈັນ

**ພາລະປັນທິຕະສູດທີ ໙ ຈົບ**

# ໑໐. ປັດຈະຍະສູດ

## ວ່າດ້ວຍປັດໄຈ

[໒໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງປະຕິດຈະສະມຸບບາດ ແລະ ປະຕິດຈະສະມຸບປັນນະທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ປະຕິດຈະສະມຸບບາດ ເປັນແນວໃດ?

ຄື ຍ້ອນຊາດເປັນປັດໄຈ ຊະຣາມໍລະນະຈຶ່ງມີ ຕະຖາຄົດເກີດຂຶ້ນກໍຕາມ ບໍ່ເກີດຂຶ້ນກໍຕາມ ທາດອັນນັ້ນ ຄື ຄວາມຕັ້ງຢູ່ຕາມທຳມະດາ ຄວາມເປັນໄປຕາມທຳມະດາ ຄວາມທີ່ມີສິ່ງນີ້ເປັນປັດໄຈຂອງສິ່ງນີ້ ກໍຄົງຕັ້ງຢູ່ແນວນັ້ນ ຕະຖາຄົດຮູ້ ບັນລຸທາດນັ້ນ ເມື່ອຮູ້ ບັນລຸແລ້ວຈຶ່ງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ແລະ ກ່າວວ່າ ທ່ານທັງຫຼາຍຈົ່ງເບິ່ງເທີ້ນ

ຍ້ອນ ຊາດ ເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ ຯລຯ

| | | | | |
|---|---|---|---|---|
| ຍ້ອນ | ພົບ | ເປັນປັດໄຈ | ຊາດຈຶ່ງມີ | ຯລຯ |
| ຍ້ອນ | ອຸປາທານ | ເປັນປັດໄຈ | ພົບຈຶ່ງມີ | ຯລຯ |
| ຍ້ອນ | ຕັນຫາ | ເປັນປັດໄຈ | ອຸປາທານຈຶ່ງມີ | ຯລຯ |
| ຍ້ອນ | ເວທະນາ | ເປັນປັດໄຈ | ຕັນຫາຈຶ່ງມີ | ຯລຯ |
| ຍ້ອນ | ຜັດສະ | ເປັນປັດໄຈ | ເວທະນາຈຶ່ງມີ | ຯລຯ |
| ຍ້ອນ | ສະລາຍະຕະນະ | ເປັນປັດໄຈ | ຜັດສະຈຶ່ງມີ | ຯລຯ |
| ຍ້ອນ | ນາມຮູບ | ເປັນປັດໄຈ | ສະລາຍະຕະນະຈຶ່ງມີ | ຯລຯ |
| ຍ້ອນ | ວິນຍານ | ເປັນປັດໄຈ | ນາມຮູບຈຶ່ງມີ | ຯລຯ |
| ຍ້ອນ | ສັງຂານ | ເປັນປັດໄຈ | ວິນຍານຈຶ່ງມີ | ຯລຯ |

ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຕະຖາຄົດເກີດຂຶ້ນກໍຕາມ ບໍ່ເກີດຂຶ້ນກໍຕາມ ທາດອັນນັ້ນ ຄື ຄວາມຕັ້ງຢູ່ຕາມທຳມະດາ ຄວາມເປັນໄປຕາມທຳມະດາ ຄວາມທີ່ມີສິ່ງນີ້ເປັນປັດໄຈຂອງສິ່ງນີ້ ກໍຄົງຕັ້ງຢູ່ແນວນັ້ນເອງ ຕະຖາຄົດຮູ້ ບັນລຸທາດນັ້ນ ເມື່ອຮູ້ແລ້ວ ບັນລຸແລ້ວ ຈຶ່ງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍແລະກ່າວວ່າ ທ່ານທັງຫຼາຍ ຈົ່ງເບິ່ງເທີ້ນ ພິກຂຸທັງຫຼາຍ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ

ໃນກະບວນການນີ້ ຕະຖະຕາ (ຄວາມເປັນແນວນັ້ນ) ອະວິຕະຖະຕາ (ຄວາມບໍ່ຄາດເຄື່ອນ) ອະນັນຍະຖະຕາ (ຄວາມບໍ່ເປັນແນວອື່ນ) ອິທັບປັດຈະຍະຕາ (ຄວາມທີ່ມີສິ່ງນີ້ເປັນປັດໄຈຂອງສິ່ງນີ້) ດັ່ງພັນລະນາມານີ້ແລ

ນີ້ຮຽກວ່າ ປະຕິດຈະສະມຸບບາດ

ປະຕິດຈະສະມຸບປັນນະທຳ ເປັນແນວໃດ?

ຄື ຊະຣາແລະມໍລະນະເປັນສະພາວະບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ມີຄວາມສິ້ນໄປ ມີຄວາມເສື່ອມໄປ ມີຄວາມຄາຍອອກ ມີຄວາມດັບໄປເປັນທຳມະດາ

ຊາດເປັນສະພາວະບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ມີຄວາມສິ້ນໄປ ມີຄວາມເສື່ອມໄປ ມີຄວາມຄາຍອອກ ມີຄວາມດັບໄປເປັນທຳມະດາ

ພົບເປັນສະພາວະບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ມີຄວາມສິ້ນໄປ ມີຄວາມເສື່ອມໄປ ມີຄວາມຄາຍອອກ ມີຄວາມດັບໄປເປັນທຳມະດາ

ອຸປາທານ ຯລຯ ຕັນຫາ ຯລຯ ເວທະນາ ຯລຯ ຜັດສະ ຯລຯ ສະລາຍະຕະນະ ຯລຯ ນາມຮູບ ຯລຯ ວິນຍານ ຯລຯ ສັງຂານທັງຫຼາຍ ຯລຯ

ອະວິດຊາເປັນສະພາວະບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ມີຄວາມສິ້ນໄປ ມີຄວາມເສື່ອມໄປ ມີຄວາມຄາຍອອກ ມີຄວາມດັບໄປເປັນທຳມະດາ

ນີ້ຮຽກວ່າ ປະຕິດຈະສະມຸບປັນນະທຳ

ເມື່ອໃດອະຣິຍະສາວົກເຫັນປະຕິດຈະສະມຸບບາດ ແລະ ປະຕິດຈະສະມຸບປັນນະທຳເຫຼົ່ານີ້ດ້ວຍດີ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ເມື່ອນັ້ນ ອະຣິຍະສາວົກນັ້ນ ຈັກເຂົ້າເຖິງບ່ອນສຸດເບື້ອງຕົ້ນ ວ່າ ໃນອະດີດເຮົາໄດ້ມີແລ້ວແມ່ນບໍ? ໃນອະດີດເຮົາບໍ່ໄດ້ມີແມ່ນບໍ ໃນອະດີດເຮົາໄດ້ເປັນອັນໃດແລ້ວນໍ? ໃນອະດີດເຮົາໄດ້ເປັນແນວໃດມາແລ້ວນໍ? ໃນອະດີດເຮົາເປັນອັນໃດແລ້ວ ຈຶ່ງໄດ້ເກີດເປັນອັນໃດອີກນໍ? ຫຼື ວ່າ ຈັກເຂົ້າເຖິງບ່ອນສຸດເບື້ອງປາຍວ່າ ໃນອະ ນາຄົດເຮົາຈັກມີບໍ? ໃນອະນາຄົດເຮົາຈັກບໍ່ມີບໍ? ໃນອະນາຄົດເຮົາຈັກເປັນແນວໃດນໍ? ໃນອະນາຄົດເຮົາຈັກເປັນອັນໃດ? ຈຶ່ງຈັກເກີດເປັນອັນໃດອີກນໍ? ຫຼື ຈັກມີຄວາມສົງໄສໃນປັດຈຸບັນອັນເປັນໄປໃນພາຍໃນ ໃນບັດນີ້ວ່າ ເຮົາມີຢູ່ບໍ? ເຮົາບໍ່ມີຢູ່ບໍ? ເຮົາເປັນອັນໃດນໍ? ເຮົາເປັນແນວໃດນໍ? ສັດນີ້ມາຈາກໄສນໍ? ເຂົາຈັກເປັນຜູ້ໄປຢູ່ໄສນໍ? ຂໍ້ນີ້ ເປັນໄປບໍ່ໄດ້

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອະຣິຍະສາວົກເຫັນປະຕິດຈະສະມຸບບາດ ແລະ ປະຕິດຈະສະມຸບປັນນະທຳເຫຼົ່ານີ້ດ້ວຍດີ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງນັ້ນເອງ

**ປັດຈະຍະສູດທີ ໑໐ ຈົບ**

**ອາຫາຣະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອາຫາຣະສູດ
໒. ໂມລິຍະຜັກຄຸນະສູດ
໓. ສະມະນະພາມມະນະສູດ
໔. ທຸຕິຍະສະມະນະພາມມະນະສູດ
໕. ກັດຈານະໂຄດຕະສູດ
໖. ທຳມະກະຖິກະສູດ
໗. ອະເຈລະກັດສະປະສູດ
໘. ຕິມພະຣຸກຂະສູດ
໙. ພາລະປັນທິຕະສູດ
໑໐. ປັດຈະຍະສູດ

# ៥. ທະສະພົນວັກ

## ໝວດວ່າດ້ວຍທະສະພົນຍານ

## ໑. ທະສະພົນສູດ

### ວ່າດ້ວຍທະສະພົນຍານ

[໘໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ຕະຖາຄົດປະກອບດ້ວຍທະສະພົນຍານ ແລະ ຈະຕຸເວສາຣັດຊະຍານ ຈຶ່ງກ້າຍັ້ງຢືນຖານະທີ່ອົງອາດ ບັນລືສີຫະນາດໃນບໍລິສັດທັງຫຼາຍ ປະກາດພົມມະຈັກໃຫ້ເປັນໄປໃນໂລກວ່າ

ຮູບເປັນແນວນີ້ ຄວາມເກີດຂຶ້ນແຫ່ງຮູບເປັນແນວນີ້ ຄວາມດັບແຫ່ງຮູບເປັນແນວນີ້
ເວທະນາເປັນແນວນີ້ ຯລຯ
ສັນຍາເປັນແນວນີ້ ຯລຯ
ສັງຂານເປັນແນວນີ້ ຯລຯ

ວິນຍານເປັນແນວນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນແນວນີ້ ຄວາມດັບແຫ່ງວິນຍານເປັນແນວນີ້ ຍ້ອນເຫດນີ້ ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ ຍ້ອນສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ ຍ້ອນສິ່ງນີ້ດັບໄປ ສິ່ງນີ້ຈຶ່ງດັບໄປ ຄື ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

**ທະສະພົນສູດທີ ໑ ຈົບ**

## ໒. ທຸຕິຍະທະສະພົນສູດ

### ວ່າດ້ວຍທະສະພົນຍານ ສູດທີ ໒

[໒໒] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ຕະຖາຄົດປະກອບດ້ວຍທະສະພົນຍານ ແລະ ຈະຕຸເວສາຣັດຊະຍານ ຈຶ່ງກ້າຢັ້ງຢືນຖານະທີ່ອົງອາດ ບັນລືສີຫະນາດໃນບໍລິສັດທັງຫຼາຍ ປະກາດພົມມະຈັກໃຫ້ເປັນໄປໃນໂລກວ່າ

ຮູບເປັນແນວນີ້ ຄວາມເກີດຂຶ້ນແຫ່ງຮູບເປັນແນວນີ້ ຄວາມດັບແຫ່ງຮູບເປັນແນວນີ້
ເວທະນາເປັນແນວນີ້ ฯลฯ
ສັນຍາເປັນແນວນີ້ ฯลฯ
ສັງຂານເປັນແນວນີ້ ฯลฯ

ວິນຍານເປັນແນວນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນແນວນີ້ ຄວາມດັບແຫ່ງວິນຍານເປັນແນວນີ້ ຍ້ອນເຫດນີ້ ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ ຍ້ອນສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ ຍ້ອນສິ່ງນີ້ດັບໄປ ສິ່ງນີ້ຈຶ່ງດັບໄປ ຄື ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ฯลฯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ฯลฯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ທຳທີ່ເຮົາກ່າວໄວ້ດີແລ້ວ ເປັນທຳເຂົ້າໃຈງ່າຍ ເປີດເຜີຍ ປະກາດໄວ້ແລ້ວ ເປັນຄືຜືນຜ້າເກົ່າທີ່ຕັດໄວ້ແລ້ວແນວນີ້ ກຸນລະບຸດຜູ້ບວດດ້ວຍສັດທາ ສົມຄວນແທ້ເພື່ອຜາຣົບຄວາມພຽນໃນທຳທີ່ເຮົາກ່າວໄວ້ດີແລ້ວ ເປັນທຳເຂົ້າໃຈງ່າຍ ເປີດເຜີຍ ປະກາດໄວ້ແລ້ວ ເປັນຄືຜືນຜ້າເກົ່າທີ່ຕັດໄວ້ແລ້ວ ສົມຄວນຜາຣົບຄວາມພຽນໄວ້ແນວນີ້ວ່າ ແມ່ນຊີ້ນແລະເລືອດໃນຮ່າງກາຍນີ້ຈັກເຫືອດແຫ້ງໄປ ເຫຼືອຢູ່ແຕ່ໜັງ ເອັນ ກະດູກກໍຕາມທີ ຜົນໃດເພິ່ງບັນລຸໄດ້ດ້ວຍເຫື່ອແຮງຂອງບຸຣຸດ ດ້ວຍຄວາມພຽນຂອງບຸຣຸດ ດ້ວຍຄວາມບາກບັ່ນຂອງບຸຣຸດ (ຖ້າ) ຍັງບໍ່ໄດ້ບັນລຸຜົນນັ້ນ ເຮົາຈັກບໍ່ຢຸດຄວາມພຽນ

ບຸກຄົນຜູ້ຂີ້ຄ້ານ ຊະຊາຍໄປດ້ວຍບາບອະກຸສົນທຳທັງຫຼາຍຍ່ອມຢູ່ເປັນທຸກ ແລະເຮັດປະໂຫຍດຂອງຕົນທີ່ຍິ່ງໃຫຍ່ໃຫ້ເສື່ອມເສຍໄປ ສ່ວນບຸກຄົນຜູ້ຜາຣົບຄວາມພຽນຜູ້ສະຫງັດຈາກບາບອະກຸສົນທຳທັງຫຼາຍແລ້ວ ຍ່ອມຢູ່ເປັນສຸກ ແລະ ເຮັດປະໂຫຍດທີ່ຍິ່ງໃຫຍ່ຂອງຕົນໃຫ້ບໍລິບູນໄດ້ ການບັນລຸທຳທີ່ເລີດດ້ວຍທຳອັນຊົ່ວບໍ່ມີ ແຕ່ການບັນລຸທຳທີ່ເລີດດ້ວຍທຳອັນເລີດຍ່ອມມີໄດ້ ພົມມະຈັນນີ້ ຜ່ອງໃສແລະໜ້າດື່ມກິນ ພຣະສາດສະດາກໍຍັງມີຢູ່ສະເພາະໜ້າ ຍ້ອນເຫດນັ້ນ ທ່ານທັງຫຼາຍຈົ່ງຜາຣົບຄວາມພຽນ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງໂດຍຕັ້ງໃຈວ່າ ບັນພະຊາຂອງເຮົາທັງຫຼາຍນີ້ ເປັນຂອງບໍ່ຕໍ່າຊາມ ບໍ່ເປັນໝັນ ມີຜົນ ມີກຳໄລ ຈັກມີແກ່ເຮົາທັງຫຼາຍ ເຮົາທັງຫຼາຍ ບໍຣິໂພກຈີວອນ ບິນທະບາດເສນາ

ສະນະ ແລະ ຄິລານະປັດໄຈເພສັດ ບໍຣິຂານຂອງຊົນເຫຼົ່າໃດ ສັກກາຣະຂອງຊົນເຫຼົ່ານັ້ນ ຈັກມີຜົນຫຼາຍ ມີອານິສົງຫຼາຍ ຍ້ອນເຮົາທັງຫຼາຍ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ດັ່ງພັນລະນາມານີ້ແລ

ພິກຂຸທັງຫຼາຍ ບຸກຄົນຜູ້ພິຈາລະນາເຫັນປະໂຫຍດຂອງຕົນສົມຄວນແທ້ ເພື່ອເຮັດກິດຂອງຕົນໃຫ້ເຖິງພ້ອມດ້ວຍຄວາມບໍ່ຜະໝາດ ຫຼື ວ່າບຸກຄົນຜູ້ພິຈາລະນາເຫັນປະໂຫຍດຂອງຜູ້ອື່ນສົມຄວນແທ້ ເພື່ອທີ່ຈະເຮັດກິດຂອງຜູ້ອື່ນໃຫ້ເຖິງພ້ອມດ້ວຍຄວາມບໍ່ຜະໝາດ ຫຼື ບຸກຄົນຜູ້ພິຈາລະນາເຫັນປະໂຫຍດທັງ ໒ ຝ່າຍ ສົມຄວນແທ້ທີ່ຈະເຮັດກິດຂອງທັງ ໒ ຝ່າຍ ໃຫ້ເຖິງພ້ອມດ້ວຍຄວາມບໍ່ຜະໝາດ

**ທຸຕິຍະທະສະພົນສູດທີ ໒ ຈົບ**

# ໓. ອຸປະນິດສູດ

## ວ່າດ້ວຍທຳທີ່ອາໄສກັນ

[໒໓] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາເມື່ອຮູ້ເຫັນ ຈຶ່ງກ່າວເຖິງຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ເຮົາເມື່ອບໍ່ຮູ້ເຫັນ ຈຶ່ງບໍ່ກ່າວເຖິງຄວາມສິ້ນໄປແຫ່ງອາສະວະທັງຫຼາຍ

ເມື່ອຮູ້ເຫັນອັນໃດ? ຄວາມສິ້ນໄປແຫ່ງອາສະວະທັງຫຼາຍຈຶ່ງມີ ຄື

ຮູບເປັນແນວນີ້ ຄວາມເກີດຂຶ້ນແຫ່ງຮູບເປັນແນວນີ້ ຄວາມດັບແຫ່ງຮູບເປັນແນວນີ້
ເວທະນາເປັນແນວນີ້ ຯລຯ
ສັນຍາເປັນແນວນີ້ ຯລຯ
ສັງຂານເປັນແນວນີ້ ຯລຯ
ວິນຍານເປັນແນວນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນແນວນີ້ ຄວາມດັບແຫ່ງວິນຍານເປັນແນວນີ້

ເຮົາເມື່ອຮູ້ເຫັນແນວນີ້ແລ ຄວາມສິ້ນໄປແຫ່ງອາສະວະທັງຫຼາຍຈຶ່ງມີ

ເມື່ອທຳເປັນທີ່ສິ້ນໄປມີຢູ່ ຄະຍະຍານ (ຍານໃນທຳເປັນທີ່ສິ້ນໄປ) ແມ່ນທຳນັ້ນຍ່ອມມີ ເຮົາກ່າວວ່າ ຄະຍະຍານແມ່ນນັ້ນມີທີ່ອາໄສ ບໍ່ໄດ້ກ່າວວ່າ ບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງຄະຍະຍານ ທຳນັ້ນຄວນຮຽກວ່າ ວິມຸດຕິ

ເຮົາກ່າວວ່າ ແມ່ນວິມຸດຕິກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງວິມຸດຕິ ທໍານັ້ນຄວນຮຽກວ່າ ວິຣາຄະ

ເຮົາກ່າວວ່າແມ່ນ ວິຣາຄະກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງວິຣາຄະ ທໍານັ້ນຄວນຮຽກວ່າ ນິບພິທາ

ເຮົາກ່າວວ່າແມ່ນນິບພິທາກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນທີ່ອາໄສແຫ່ງນິບພິທາ ທໍານັ້ນຄວນຮຽກວ່າ ຍະຖາພູຕະຍານທັດສະນະ

ເຮົາກ່າວວ່າແມ່ນ ຍະຖາພູຕະຍານທັດສະນະກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງຍະຖາພູຕະຍານທັດສະນະ ທໍານັ້ນຄວນຮຽກວ່າ ສະມາທິ

ເຮົາກ່າວວ່າ ແມ່ນສະມາທິກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງສະມາທິ ທໍານັ້ນຄວນຮຽກວ່າ ສຸກ

ເຮົາກ່າວວ່າ ແມ່ນສຸກກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງສຸກ ທໍານັ້ນຄວນຮຽກວ່າ ປັດສັດທິ

ເຮົາກ່າວວ່າ ແມ່ນປັດສັດທິກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງປັດສັດທິ ທໍານັ້ນຄວນຮຽກວ່າ ປີຕິ

ເຮົາກ່າວວ່າ ແມ່ນປີຕິກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງປີຕິ ທໍານັ້ນຄວນຮຽກວ່າ ປາໂມດ

ເຮົາກ່າວວ່າ ແມ່ນປາໂມດກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງປາໂມດ ທໍານັ້ນຄວນຮຽກວ່າ ສັດທາ

ເຮົາກ່າວວ່າ ແມ່ນສັດທາກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງສັດທາ ທໍານັ້ນຄວນຮຽກວ່າ ທຸກ

ເຮົາກ່າວວ່າ ແມ່ນທຸກກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງທຸກ ທໍານັ້ນຄວນຮຽກວ່າ ຊາດ

ເຮົາກ່າວວ່າແມ່ນຊາດກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງຊາດ ທໍານັ້ນຄວນຮຽກວ່າ ພົບ

ເຮົາກ່າວວ່າ ແມ່ນພົບກໍມີທີ່ອາໄສ ບໍ່ໄດ້ກ່າວວ່າ ບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງພົບ ທໍານັ້ນຄວນຮຽກວ່າ ອຸປາທານ

ເຮົາກ່າວວ່າ ແມ່ນອຸປາທານກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງອຸປາທານ ທໍານັ້ນຄວນຮຽກວ່າ ຕັນຫາ

ເຮົາກ່າວວ່າ ແມ່ນຕັນຫາກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງຕັນຫາ ທໍານັ້ນຄວນຮຽກວ່າ ເວທະນາ ฯลฯ

ທໍານັ້ນຄວນຮຽກວ່າ ຜັດສະ ฯลฯ ທໍານັ້ນຄວນຮຽກວ່າ ສະລາຍະຕະນະ ฯลฯ ທໍານັ້ນຄວນຮຽກວ່າ ນາມຮູບ ฯลฯ ທໍານັ້ນຄວນຮຽກວ່າ ວິນຍານ ฯลฯ ທໍານັ້ນຄວນຮຽກວ່າ ສັງຂານທັງຫຼາຍ

ເຮົາກ່າວວ່າແມ່ນສັງຂານທັງຫຼາຍ ກໍມີທີ່ອາໄສ ບໍ່ໄດ້ກ່າວວ່າບໍ່ມີທີ່ອາໄສ ອັນໃດນໍ? ເປັນບ່ອນອາໄສແຫ່ງສັງຂານທັງຫຼາຍ ທໍານັ້ນຄວນຮຽກວ່າ ອະວິດຊາ

ພິກຂຸທັງຫຼາຍ ຍ້ອນເຫດນີ້ ສັງຂານທັງຫຼາຍມີອະວິດຊາເປັນບ່ອນອາໄສ ວິນຍານມີສັງຂານເປັນບ່ອນອາໄສ ນາມຮູບມີວິນຍານເປັນບ່ອນອາໄສ ສະລາຍະຕະນະມີນາມຮູບເປັນບ່ອນອາໄສ ຜັດສະມີສະລາຍະຕະນະເປັນບ່ອນອາໄສ ເວທະນາມີຜັດສະເປັນບ່ອນອາໄສ ຕັນຫາມີເວທະນາເປັນບ່ອນອາໄສ ອຸປາທານມີຕັນຫາເປັນບ່ອນອາໄສ ພົບມີອຸປາທານເປັນບ່ອນອາໄສ ຊາດມີພົບເປັນບ່ອນອາໄສ ທຸກ ມີຊາດເປັນບ່ອນອາໄສ ສັດທາມີທຸກເປັນບ່ອນອາໄສ ປາໂມດມີສັດທາເປັນບ່ອນອາໄສ ປີຕິມີປາໂມດເປັນບ່ອນອາໄສ ປັດສັດທິມີປີຕິເປັນບ່ອນອາໄສ ສຸກມີປັດສັດທິເປັນບ່ອນອາໄສ ສະມາທິ ມີສຸກເປັນບ່ອນອາໄສ ຍະຖາພູຕະຍານທັດສະນະມີສະມາທິເປັນບ່ອນອາໄສ ນິບພິທາມີຍະຖາພູຕະ ຍານທັດສະນະເປັນບ່ອນອາໄສ ວິຣາຄະມີນິບພິທາເປັນບ່ອນອາໄສ ວິມຸດຕິມີວິຣາຄະເປັນບ່ອນອາໄສ ຄະຍະຍານມີວິມຸດຕິເປັນບ່ອນອາໄສ

ເມື່ອຝົນເມັດໃຫຍ່ຕົກເທິງຍອດພູ ນໍ້ານັ້ນໄຫຼໄປຕາມບ່ອນຫຼຸບ ເຮັດໃຫ້ຮ່ອມພູ ລໍາທານ ແລະຫ້ວຍເຕັມບໍລິບູນ ຮ່ອມພູ ລໍາທານ ແລະ ເມື່ອຫ້ວຍທັງຫຼາຍເຕັມບໍລິບູນແລ້ວ ເຮັດໜອງນໍ້າໃຫ້ເຕັມ ເມື່ອໜອງນໍ້າເຕັມບໍລິບູນແລ້ວ ເຮັດໜອງໃຫ້ເຕັມ ເມື່ອໜອງເຕັມແລ້ວ ເຮັດແມ່ນໍ້ານ້ອຍໃຫ້ເຕັມ ເມື່ອແມ່ນໍ້ານ້ອຍເຕັມແລ້ວ ເຮັດແມ່ນໍ້າໃຫຍ່ໃຫ້ເຕັມ ເມື່ອແມ່ນໍ້າໃຫຍ່ເຕັມແລ້ວ ກໍເຮັດມະຫາສະມຸດໃຫ້ເຕັມ ແມ່ນສັນໃດ

ພິກຂຸທັງຫຼາຍ ສັງຂານທັງຫຼາຍ ມີອະວິດຊາເປັນບ່ອນອາໄສ ວິນຍານມີສັງຂານເປັນບ່ອນອາໄສ ນາມຮູບມີວິນຍານເປັນບ່ອນອາໄສ ສະລາຍະຕະນະມີນາມຮູບເປັນບ່ອນອາໄສ

ຜັດສະມີ ສະລາຍະຕະນະເປັນບ່ອນອາໄສ ເວທະນາມີຜັດສະເປັນບ່ອນອາໄສ ຕັນຫາມີເວທະນາເປັນບ່ອນອາໄສ ອຸປາທານມີຕັນຫາເປັນບ່ອນອາໄສ ພົບມີອຸປາທານເປັນບ່ອນອາໄສ ຊາດມີພົບເປັນບ່ອນອາໄສ ທຸກມີຊາດເປັນບ່ອນອາໄສ ສັດທາມີທຸກເປັນບ່ອນອາໄສ ປາໂມດມີສັດທາເປັນບ່ອນອາໄສ ປີຕິມີປາໂມດເປັນບ່ອນອາໄສ ປັດສັດທິມີປີຕິເປັນບ່ອນອາໄສ ສຸກມີປັດສັດທິເປັນບ່ອນອາໄສ ສະມາທິມີສຸກເປັນບ່ອນອາໄສ ຍະຖາພູຕະຍານທັດສະນະມີສະມາທິເປັນບ່ອນອາໄສ ນິບພິທາມີຍະຖາພູຕະຍານທັດສະນະເປັນບ່ອນອາໄສ ວິຣາຄະມີນິບພິທາເປັນບ່ອນອາໄສ ວິມຸດຕິມີວິຣາຄະເປັນບ່ອນອາໄສ ຂະຍະຍານມີວິມຸດຕິເປັນບ່ອນອາໄສ ຄືກັນສັນນັ້ນ

**ອຸປະນິດສູດທີ ໓ ຈົບ**

# ໔. ອັນຍະຕິດຖິຍະສູດ

## ວ່າດ້ວຍອັນຍະເດຍຣະຖີ

[໒໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ທລຈ ເຂດເມືອງຣາຊະຄຶ

ເມື່ອໃນເວລາເຊົ້າ ທ່ານພຣະສາຣີບຸດຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງຣາຊະຄຶ ໄດ້ມີຄວາມຄິດດັ່ງນີ້ວ່າ ການທ່ຽວໄປບິນທະບາດໃນເມືອງຣາດຊະຄຶຍັງເຊົ້າໂພດ ທາງທີ່ດີ ເຮົາເພິ່ງເຂົ້າໄປສູ່ອາຮາມຂອງພວກອັນຍະເດຍຣະຖີປະຣິພາຊົກກ່ອນ

ຄັ້ງນັ້ນແລ ທ່ານພຣະສາຣີບຸດ ໄດ້ເຂົ້າໄປສູ່ອາຮາມຂອງພວກອັນຍະເດຍຣະຖີປະຣິພາຊົກ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນກັບພວກອັນຍະເດຍຣະຖີປະຣິພາຊົກນັ້ນ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພວກອັນຍະເດຍຣະຖີປະຣິພາຊົກນັ້ນ ໄດ້ກ່າວກັບທ່ານພຣະສາຣີບຸດດັ່ງນີ້ ວ່າ

ທ່ານພຣະສາຣີບຸດ ມີສະມະນະພາມຝ່າຍກຳວາທະພວກໜຶ່ງບັນຍັດວ່າ ທຸກເປັນສິ່ງທີ່ຕົນເຮັດເອງ ແລະ ມີສະມະນະພາມຝ່າຍກຳວາທະພວກໜຶ່ງບັນຍັດວ່າ ທຸກເປັນສິ່ງທີ່ຄົນອື່ນເຮັດໃຫ້ ສະມະນະພາມຝ່າຍກຳວາທະພວກໜຶ່ງບັນຍັດວ່າ ທຸກເປັນສິ່ງທີ່ຕົນເຮັດເອງແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ ແລະ ມີສະມະນະພາມຝ່າຍກຳວາທະພວກໜຶ່ງບັນຍັດວ່າ ທຸກເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະຄົນອື່ນເຮັດໃຫ້ກໍບໍ່ແມ່ນ

ທ່ານພຣະສາຣີບຸດ ກໍໃນວາທະເຫຼົ່ານີ້ ພຣະສະມະນະໂຄດົມຕັດໄວ້ແນວໃດ? ຕັດບອກໄວ້ແນວໃດ? ແລະພວກຂ້າພະເຈົ້າຈະຕອບແນວໃດ? ຈຶ່ງຈະຊື່ວ່າເວົ້າກົງຕາມທີ່ພຣະສະມະນະ

ໂຄດົມຕັດໄວ້ ບໍ່ຊື່ວ່າເປັນການກ່າວຕູ່ພຣະສະມະນະໂຄດົມດ້ວຍຄຳຕົວະ ຊື່ວ່າກ່າວແກ້ໄດ້ຢ່າງສົມເຫດສົມຜົນ ແລະ ບໍ່ແມ່ນການເວົ້າໄປຕາມຄຳເຊັ່ນນັ້ນທີ່ຈະເປັນເຫດໃຫ້ຖືກຕຳໜິໄດ້

ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ ທຸກເປັນສະພາວະທີ່ອາໄສປັດໄຈເກີດຂຶ້ນ ອາໄສປັດໄຈອັນໃດ? ຄື ອາໄສຜັດສະ ບຸກຄົນຜູ້ກ່າວຄຳເວົ້າແບບນີ້ ຈຶ່ງຊື່ວ່າ ເປັນຜູ້ເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າ ກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ແລະ ບໍ່ແມ່ນການເວົ້າໄປຕາມຄຳເຊັ່ນນັ້ນ ທີ່ຈະເປັນເຫດໃຫ້ຖືກຕຳໜິໄດ້

ທ່ານທັງຫຼາຍ ໃນວາທະທັງ ໔ ນັ້ນ ທຸກທີ່ພວກສະມະນະພາມຝ່າຍກຳວາທະ ບັນຍັດວ່າເປັນສິ່ງທີ່ຕົນເຮັດເອງ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ ທຸກທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ເປັນສິ່ງທີ່ຄົນອື່ນເຮັດໃຫ້ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ ທຸກທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ເປັນສິ່ງທີ່ຕົນເຮັດເອງດ້ວຍ ແລະ ເປັນສິ່ງທີ່ຄົນອື່ນເຮັດໃຫ້ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ ທຸກທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ

ທ່ານທັງຫຼາຍ ໃນວາທະທັງ ໔ ນັ້ນ ເປັນໄປບໍ່ໄດ້ເລີຍ ທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ທຸກເປັນສິ່ງທີ່ຕົນເຮັດເອງຈະສະເຫວີຍທຸກເວັ້ນຈາກຜັດສະ ເປັນໄປບໍ່ໄດ້ເລີຍທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ທຸກເປັນສິ່ງທີ່ຄົນອື່ນເຮັດໃຫ້ ຈະສະເຫວີຍທຸກເວັ້ນຈາກຜັດສະ ເປັນໄປບໍ່ໄດ້ເລີຍທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ທຸກເປັນສິ່ງທີ່ຕົນເຮັດເອງດ້ວຍແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ ຈະສະເຫວີຍທຸກເວັ້ນຈາກຜັດສະ ເປັນໄປບໍ່ໄດ້ເລີຍທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ທຸກເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນແລະຄົນອື່ນເຮັດໃຫ້ກໍບໍ່ແມ່ນ ຈະສະເຫວີຍທຸກເວັ້ນຈາກຜັດສະ

ທ່ານພຣະອານົນ ໄດ້ຟັງທ່ານພຣະສາຣີບຸດສົນທະນາປາໄສກັບພວກອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ຄັ້ງນັ້ນ ທ່ານພຣະອານົນທ່ຽວໄປບິນທະບາດໃນເມືອງຣາດຊະຄຶ ກັບຈາກບິນທະບາດ ຫຼັງຈາກສັນພັດຕາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນຄຳສົນທະນາທັງໝົດຂອງທ່ານພຣະສາຣີບຸດກັບພວກອັນຍະເດຍຣະຖີປະຣິພາຊົກນັ້ນ ແດ່ພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ດີແລ້ວ ອານົນ ຕາມທີ່ສາຣີບຸດພະຍາກອນນັ້ນຊື່ວ່າພະຍາກອນໂດຍຖືກຕ້ອງ ເຮົາກ່າວວ່າ ທຸກເປັນສະພາວະທີ່ອາໄສປັດໄຈເກີດຂຶ້ນ ອາໄສປັດໄຈອັນໃດ? ຄື ອາໄສຜັດສະ ບຸກຄົນຜູ້ກ່າວຄຳເວົ້າແບບນີ້ ຈຶ່ງຊື່ວ່າເປັນຜູ້ເວົ້າກົງ ຕາມທີ່ເຮົາ

ກ່າວໄວ້ ບໍ່ຊື່ວ່າ ກ່າວຕູ່ເຮົາດ້ວຍຄຳຕົວະ ຊື່ວ່າ ກ່າວແກ້ຢ່າງສົມເຫດສົມຜົນ ທັງບໍ່ແມ່ນການເວົ້າໄປຕາມຄຳເຊັ່ນນັ້ນ ທີ່ຈະເປັນເຫດໃຫ້ຖືກຕຳໜິໄດ້

ໃນວາທະທັງ ໔ ນັ້ນ ທຸກທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ເປັນສິ່ງທີ່ຕົນເຮັດເອງ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ ຯລຯ ທຸກທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ

ໃນວາທະທັງ ໔ ນັ້ນ ເປັນໄປບໍ່ໄດ້ເລີຍທີ່ພວກສະມະນະພາມຝ່າຍກຳວາທະ ບັນຍັດວ່າທຸກເປັນສິ່ງທີ່ຕົນເຮັດເອງ ຈະສະເຫວີຍທຸກເວັ້ນຈາກຜັດສະ ຯລຯ ເປັນໄປບໍ່ໄດ້ທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ທຸກເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະຄົນອື່ນເຮັດໃຫ້ກໍບໍ່ແມ່ນ ຈະສະເຫວີຍທຸກເວັ້ນຈາກຜັດສະ

ສະໄໝໜຶ່ງ ເຮົາຢູ່ທີ່ເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາຊະຄຶນີ້ເອງ ເມື່ອໃນເວລາເຊົ້າ ເຮົາຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງ ຣາດຊະຄຶ ອານົນ ເຮົາໄດ້ມີຄວາມຄິດດັ່ງນີ້ວ່າ ການທ່ຽວໄປບິນທະບາດໃນເມືອງຣາຊະຄຶ ຍັງເຊົ້າໂພດ ທາງທີ່ດີ ເຮົາເພິ່ງເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກກ່ອນດີກວ່າ

ຄັ້ງນັ້ນ ເຮົາໄດ້ເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ ໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນກັບພວກອັນຍະເດຍຣະຖີປະຣິພາຊົກ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພວກອັນຍະເດຍຣະຖີປະຣິພາຊົກໄດ້ກ່າວຄຳນີ້ກັບເຮົາວ່າ

ທ່ານພຣະໂຄດົມ ສະມະນະພາມຝ່າຍກຳວາທະພວກໜຶ່ງບັນຍັດວ່າ ທຸກເປັນສິ່ງທີ່ຕົນເຮັດເອງ ສະມະນະພາມຝ່າຍກຳວາທະພວກໜຶ່ງບັນຍັດວ່າ ທຸກເປັນສິ່ງທີ່ຄົນອື່ນເຮັດໃຫ້ ສະມະນະພາມຝ່າຍກຳວາທະພວກໜຶ່ງບັນຍັດວ່າ ທຸກເປັນສິ່ງທີ່ຕົນເຮັດເອງແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ ແລະ ມີສະມະນະພາມຝ່າຍກຳວາທະພວກໜຶ່ງບັນຍັດວ່າ ທຸກເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນ

ກໍໃນວາທະເຫຼົ່ານີ້ ທ່ານພຣະໂຄດົມຕັດໄວ້ແນວໃດ? ຕັດບອກໄວ້ແນວໃດ? ແລະພວກຂ້າພະເຈົ້າຈະຕອບວ່າແນວໃດ? ຈຶ່ງຈະຊື່ວ່າເວົ້າກົງຕາມທີ່ພຣະໂຄດົມຕັດໄວ້ ບໍ່ຊື່ວ່າກ່າວຕູ່ທ່ານພຣະໂຄດົມດ້ວຍຄຳຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ແລະ ບໍ່ແມ່ນໄວ້າໄປຕາມຄຳເຊັ່ນນັ້ນ ທີ່ຈະເປັນເຫດໃຫ້ຖືກຕຳໜິໄດ້

ອານົນ ເມື່ອອັນຍະເດຍຣະຖີປະຣິພາຊົກກ່າວແບບນີ້ແລ້ວ ເຮົາໄດ້ກ່າວວ່າ ທ່ານທັງຫຼາຍ ເຮົາກ່າວວ່າ ທຸກເປັນສະພາວະທີ່ອາໄສປັດໄຈເກີດຂຶ້ນ ອາໄສປັດໄຈອັນໃດ? ຄື ອາໄສຜັດສະ ບຸກຄົນຜູ້ກ່າວຄຳເວົ້າແບບນີ້ ຈຶ່ງຊື່ວ່າ ເປັນຜູ້ເວົ້າກົງຕາມທີ່ເຮົາກ່າວໄວ້ ບໍ່ຊື່ວ່າກ່າວຕູ່ເຮົາດ້ວຍຄຳຕົວະ ຊື່ວ່າ ກ່າວແກ້ຢ່າງສົມເຫດສົມຜົນ ແລະ ບໍ່ແມ່ນການເວົ້າໄປຕາມຄຳເຊັ່ນນັ້ນທີ່ຈະເປັນເຫດໃຫ້ຖືກຕຳໜິໄດ້

ທ່ານທັງຫຼາຍ ໃນວາທະທັງ ໔ ນັ້ນ ທຸກທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າເປັນສິ່ງທີ່ຕົນເຮັດເອງ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ ທຸກທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ເປັນສິ່ງທີ່ຄົນອື່ນເຮັດໃຫ້ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ ທຸກທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ເປັນສິ່ງທີ່ຕົນເຮັດເອງແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ ທຸກທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ

ທ່ານທັງຫຼາຍ ໃນວາທະທັງ ໔ ນັ້ນ ເປັນໄປບໍ່ໄດ້ທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ທຸກເປັນສິ່ງທີ່ຕົນເຮັດເອງຈະສະເຫວີຍທຸກເວັ້ນຈາກຜັດສະ ฯລฯ ພວກສະມະນະພາມຝ່າຍກຳວາທະ ฯລฯ ພວກສະມະນະພາມຝ່າຍກຳວາທະ ฯລฯ ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ທຸກທີ່ເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ຈະສະເຫວີຍທຸກເວັ້ນຈາກຜັດສະ

ຂ້ານ້ອຍ ໜ້າອັດສະຈັນຈິງແທ້ ບໍ່ເຄີຍຜາກົດ ທີ່ເນື້ອຄວາມທັງໝົດ ພຣະຜູ້ມີພຣະພາກເຈົ້າຕັດໄວ້ດ້ວຍບົດ ໆ ດຽວ ເຄີຍມີບໍ ທີ່ເນື້ອຄວາມຄືແບບນີ້ ເມື່ອພຣະອົງຕັດໂດຍພິດສະດານຈະເປັນເນື້ອຄວາມທີ່ເລິກເຊິ່ງດ້ວຍ ແລະ ເປັນກະແສຄວາມທີ່ເລິກເຊິ່ງດ້ວຍ

ອານົນ ຖ້າເຊັ່ນນັ້ນ ເນື້ອຄວາມໃນເລື້ອງນີ້ຈົ່ງຜາກົດແຈ້ງແກ່ທ່ານເອງເທີ້ນ

ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າຜູ້ໃດ ເພິ່ງຖາມຂ້າພຣະອົງແບບນີ້ວ່າ ທ່ານອານົນ ຊະຣາແລະມໍລະນະມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດເປັນ ແດນເກີດ ຂ້າພຣະອົງຖືກຖາມແບບນີ້ ເພິ່ງຕອບແບບນີ້ວ່າ ທ່ານທັງຫຼາຍ ຊະຣາແລະມໍລະນະ ມີຊາດເປັນເຫດ ມີຊາດເປັນເຫດເກີດ ມີຊາດເປັນກຳເນີດ ມີຊາດເປັນແດນເກີດ ຂ້າພຣະອົງຖືກຖາມແບບນີ້ ຈັກຕອບແບບນີ້ ຂ້ານ້ອຍ

ຖ້າຜູ້ໃດ ເພິ່ງຖາມຂ້າພຣະອົງແບບນີ້ວ່າ ທ່ານພຣະອານົນ ຊາດມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ ຂ້າພຣະອົງຖືກຖາມ

ແນວນີ້ ເພິ່ງຕອບແນວນີ້ວ່າ ທ່ານທັງຫຼາຍ ຊາດມີພົບເປັນເຫດ ມີພົບເປັນເຫດເກີດ ມີພົບເປັນກຳເນີດ ມີພົບເປັນແດນເກີດ ຂ້າພຣະອົງຖືກຖາມແນວນີ້ ຈັກຕອບແນວນີ້ ຂ້ານ້ອຍ

ຖ້າຜູ້ໃດ ເພິ່ງຖາມຂ້າພຣະອົງແນວນີ້ວ່າ ທ່ານອາວຸໂສ ພົບມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ ຂ້າພຣະອົງຖືກຖາມແນວນີ້ ເພິ່ງຕອບແນວນີ້ວ່າ ທ່ານທັງຫຼາຍ ພົບມີອຸປາທານເປັນເຫດ ມີອຸປາທານເປັນເຫດເກີດ ມີອຸປາທານເປັນກຳເນີດ ມີອຸປາທານເປັນແດນເກີດ ຂ້າພຣະອົງຖືກຖາມແນວນີ້ ຈັກຕອບແນວນີ້ ຂ້ານ້ອຍ

ຖ້າຜູ້ໃດ ເພິ່ງຖາມຂ້າພຣະອົງ ແນວນີ້ວ່າ ທ່ານອາວຸໂສ ອຸປາທານ ໗ລ໗ ຕັນຫາ ໗ລ໗ ເວທະນາ ໗ລ໗ ຜັດສະມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ ຂ້າພຣະອົງຖືກຖາມແນວນີ້ ເພິ່ງຕອບແນວນີ້ວ່າ ທ່ານທັງຫຼາຍ ຜັດສະມີສະລາຍະຕະນະເປັນເຫດ ມີສະລາຍະຕະນະເປັນເຫດເກີດ ມີສະລາຍະຕະນະເປັນກຳເນີດ ມີສະລາຍະຕະນະເປັນແດນເກີດ ຂ້າພຣະອົງຖືກຖາມແນວນີ້ ຈັກຕອບແນວນີ້ວ່າ ທ່ານທັງຫຼາຍ ກໍຍ້ອນ ຜັດສາຍະຕະນະທັງ ໖ ນັ້ນ ດັບໄປບໍ່ເຫຼືອດ້ວຍວິຣາຄະ ຜັດສະຈຶ່ງດັບ ຍ້ອນຜັດສະດັບ ເວທະນາຈຶ່ງດັບ ຍ້ອນເວທະນາດັບ ຕັນຫາຈຶ່ງດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຍ້ອນພົບດັບ ຊາດຈຶ່ງດັບ ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເມື່ອຖືກຖາມແນວນີ້ ຈັກຕອບດັ່ງກ່າວມານີ້ແລ

**ອັນຍະຕິດຖິຍະສູດທີ ໔ ຈົບ**

# ໕. ພູມິຊະສູດ

## ວ່າດ້ວຍພຣະພູມຊະ

[໘໕] ພຣະຜູ້ມີພາກເຈົ້າປະທັບຢູ່ ໗ລ໗ ເຂດເມືອງສາວັດຖີ

ຄັ້ງນັ້ນ ທ່ານພຣະພູມຊະອອກຈາກທີ່ຫຼີບຫຼີກໃນເວລາຄ່ຳ ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນກັບ ທ່ານພຣະສາຣີບຸດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ເມື່ອແລ້ວ ທ່ານພຣະພູມຊະໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ ວ່າ

ທ່ານພຣະສາຣີບຸດ ສະມະນະພາມຝ່າຍກຳວາທະພວກໜຶ່ງບັນຍັດວ່າ ສຸກແລະທຸກເປັນສິ່ງທີ່ຕົນເຮັດເອງ ສະມະນະພາມຝ່າຍກຳວາທະພວກໜຶ່ງບັນຍັດວ່າ ສຸກແລະທຸກເປັນສິ່ງທີ່ຄົນອື່ນເຮັດໃຫ້ ສະມະນະພາມຝ່າຍກຳວາທະພວກໜຶ່ງບັນຍັດວ່າ ສຸກແລະທຸກເປັນສິ່ງທີ່ຕົນເຮັດເອງ ແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ ແລະ ມີສະມະນະພາມຝ່າຍກຳວາທະພວກໜຶ່ງບັນຍັດວ່າ ສຸກແລະທຸກເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນ

ໃນວາທະເຫຼົ່ານີ້ ພຣະຜູ້ມີພຣະພາກເຈົ້າຂອງເຮົາຕັດໄວ້ແນວໃດ? ຕັດບອກໄວ້ແນວໃດ? ແລະເຮົາທັງຫຼາຍຈະຕອບແນວໃດ? ຈຶ່ງຈະຊື່ວ່າເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ແລະ ບໍ່ແມ່ນການເວົ້າໄປຕາມຄຳເຊັ່ນນັ້ນທີ່ຈະເປັນເຫດໃຫ້ຖືກຕຳໜິໄດ້

ທ່ານຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ ສຸກແລະທຸກເປັນສະພາວະທີ່ອາໄສປັດໄຈເກີດຂຶ້ນ ອາໄສປັດໄຈອັນໃດ? ຄື ອາໄສຜັດສະ ບຸກຄົນຜູ້ກ່າວຄຳເວົ້າແນວນີ້ ຈຶ່ງຊື່ວ່າເປັນຜູ້ເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າ ກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ແລະບໍ່ແມ່ນການເວົ້າໄປຕາມຄຳເຊັ່ນນັ້ນ ທີ່ຈະເປັນເຫດໃຫ້ຖືກຕຳໜິໄດ້

ໃນວາທະທັງ ໔ ນັ້ນ ສຸກແລະທຸກທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ເປັນສິ່ງທີ່ຕົນເຮັດເອງ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ ສຸກແລະທຸກທີ່ພວກສະມະນະພາມຝ່າຍກຳວາທະ ໆລໆ ສຸກແລະທຸກທີ່ພວກສະມະນະພາມຝ່າຍກຳວາທະ ໆລໆ ສຸກແລະທຸກທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນແລະຄົນອື່ນເຮັດໃຫ້ກໍບໍ່ແມ່ນ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ

ໃນວາທະທັງ ໔ ນັ້ນ ເປັນໄປບໍ່ໄດ້ທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ສຸກແລະທຸກເປັນສິ່ງທີ່ຕົນເຮັດເອງ ຈະສະເຫວີຍສຸກແລະທຸກເວັ້ນຈາກຜັດສະ ເປັນໄປບໍ່ໄດ້ທີ່ພວກສະມະນະພາມຝ່າຍກຳວາທະ ໆລໆ ເປັນໄປບໍ່ໄດ້ທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ສຸກແລະທຸກເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ຈະສະເຫວີຍສຸກແລະທຸກເວັ້ນຈາກຜັດສະ

ທ່ານພຣະອານົນໄດ້ຟັງການສົນທະນາປາໄສຂອງທ່ານພຣະສາຣີບຸດກັບທ່ານພຣະພູມຊະແລ້ວ ລຳດັບນັ້ນ ທ່ານພຣະອານົນຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນຄຳສົນທະນາທັງໝົດຂອງທ່ານພຣະສາຣີບຸດກັບທ່ານພຣະພູມຊະ ແດ່ພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ດີແລ້ວ ອານົນ ຕາມທີ່ສາຣີບຸດພະຍາກອນນັ້ນຊື່ວ່າ ເພິ່ງພະຍາກອນໂດຍຖືກຕ້ອງ ເຮົາກ່າວວ່າ ສຸກແລະທຸກເປັນສະພາວະທີ່ອາໄສປັດໄຈເກີດຂຶ້ນ ອາໄສ ປັດໄຈອັນໃດ ຄື ອາໄສຜັດສະ ບຸກຄົນຜູ້ກ່າວຄຳເວົ້າແນວນີ້ ຈຶ່ງຊື່ວ່າເປັນຜູ້ເວົ້າກົງຕາມທີ່ເຮົາກ່າວໄວ້ ບໍ່ຊື່ວ່າກ່າວຕູ່ເຮົາດ້ວຍຄຳຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ທັງບໍ່ແມ່ນການເວົ້າໄປຕາມຄຳເຊັ່ນນັ້ນທີ່ຈະເປັນເຫດໃຫ້ຖືກຕຳໜິໄດ້

ໃນວາທະທັງ ໔ ນັ້ນ ສຸກແລະທຸກທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ເປັນສິ່ງທີ່ຕົນເຮັດເອງ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ ສະມະນະພາມຝ່າຍກຳວາທະ ຯລຯ ສະມະນະພາມຝ່າຍກຳວາທະ ຯລຯ ສຸກແລະທຸກທີ່ພວກສະມະນະພາມຝ່າຍ ກຳວາທະບັນຍັດວ່າເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ທີ່ຄົນອື່ນເຮັດໃຫ້ກໍບໍ່ແມ່ນນັ້ນ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ

ໃນວາທະທັງ ໔ ນັ້ນ ເປັນໄປບໍ່ໄດ້ທີ່ພວກສະມະນະພາມຝ່າຍກຳວາທະບັນຍັດວ່າ ສຸກແລະທຸກເປັນສິ່ງທີ່ຕົນເຮັດເອງ ຈະສະເຫວີຍສຸກແລະທຸກເວັ້ນຈາກຜັດສະ ສະມະນະພາມຝ່າຍກຳວາທະ ຯລຯ ສະມະນະພາມຝ່າຍກຳວາທະ ຯລຯ ສະມະນະພາມຝ່າຍກຳວາທະບັນຍັດວ່າສຸກແລະທຸກເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ຈະສະເຫວີຍສຸກແລະທຸກເວັ້ນຈາກຜັດສະ

ເມື່ອກາຍມີຢູ່ ສຸກແລະທຸກທີ່ເປັນໄປໃນພາຍໃນ ຈຶ່ງເກີດຂຶ້ນ ຍ້ອນຄວາມຈົ່ງໃຈທາງກາຍເປັນເຫດ ຫຼື ວ່າເມື່ອວາຈາມີຢູ່ ສຸກແລະທຸກທີ່ເປັນໄປໃນພາຍໃນຈຶ່ງເກີດຂຶ້ນ ຍ້ອນຄວາມຈົ່ງໃຈທາງວາຈາເປັນເຫດ ຫຼື ວ່າເມື່ອໃຈມີຢູ່ ສຸກແລະທຸກທີ່ເປັນໄປໃນພາຍໃນຈຶ່ງເກີດຂຶ້ນ ຍ້ອນຄວາມຈົ່ງໃຈທາງໃຈເປັນເຫດ ແລະ ຍ້ອນອະວິດຊາເປັນປັດໄຈດ້ວຍ

ບຸກຄົນ ປຸງແຕ່ງກາຍສັງຂານ ເຊິ່ງເປັນປັດໄຈໃຫ້ສຸກແລະທຸກທີ່ເປັນໄປໃນພາຍໃນເກີດຂຶ້ນດ້ວຍຕົນເອງແດ່ ປຸງແຕ່ງກາຍສັງຂານ ເຊິ່ງເປັນປັດໄຈໃຫ້ສຸກ ແລະ ທຸກທີ່ເປັນໄປໃນພາຍໃນເກີດຂຶ້ນຍ້ອນຄົນອື່ນແດ່ ບຸກຄົນຮູ້ສຶກໂຕຢູ່ ປຸງແຕ່ງກາຍສັງຂານ ເຊິ່ງເປັນປັດໄຈໃຫ້ສຸກແລະທຸກທີ່ເປັນໄປໃນພາຍໃນເກີດຂຶ້ນແດ່ ບໍ່ຮູ້ສຶກໂຕຢູ່ ປຸງແຕ່ງກາຍສັງຂານ ເຊິ່ງເປັນປັດໄຈໃຫ້ສຸກແລະທຸກທີ່ເປັນໄປໃນພາຍໃນເກີດຂຶ້ນແດ່

ບຸກຄົນ ປຸງແຕ່ງວະຈີສັງຂານ ເຊິ່ງເປັນປັດໄຈໃຫ້ສຸກ ແລະ ທຸກທີ່ເປັນໄປໃນພາຍໃນເກີດຂຶ້ນດ້ວຍຕົນເອງແດ່ ປຸງແຕ່ງວະຈີສັງຂານ ເຊິ່ງເປັນປັດໄຈໃຫ້ສຸກ ແລະ ທຸກທີ່ເປັນໄປໃນພາຍໃນເກີດຂຶ້ນຍ້ອນຄົນອື່ນແດ່ ບຸກຄົນຮູ້ສຶກໂຕຢູ່ ຯລຯ ແດ່ ບໍ່ຮູ້ສຶກໂຕຢູ່ ປຸງແຕ່ງວະຈີສັງຂານ ເຊິ່ງເປັນປັດໄຈໃຫ້ສຸກ ແລະ ທຸກທີ່ເປັນໄປໃນພາຍໃນເກີດຂຶ້ນແດ່

ບຸກຄົນ ປຸງແຕ່ງມະໂນສັງຂານ ເຊິ່ງເປັນປັດໄຈໃຫ້ສຸກແລະທຸກທີ່ເປັນໄປໃນພາຍໃນເກີດຂຶ້ນ ດ້ວຍຕົນເອງແດ່ ປຸງແຕ່ງມະໂນສັງຂານ ເຊິ່ງເປັນປັດໄຈໃຫ້ສຸກ ແລະ ທຸກທີ່ເປັນໄປໃນພາຍໃນ ເກີດຂຶ້ນຍ້ອນຄົນອື່ນແດ່ ບຸກຄົນຮູ້ສຶກໂຕຢູ່ ຯລຯ ແດ່ ບໍ່ຮູ້ສຶກໂຕຢູ່ ປຸງແຕ່ງມະໂນສັງຂານ ເຊິ່ງເປັນປັດໄຈໃຫ້ສຸກ ແລະ ທຸກທີ່ເປັນໄປໃນພາຍໃນເກີດຂຶ້ນແດ່

ອານົນ ອະວິດຊາແຊກຢູ່ແລ້ວໃນທຳເຫຼົ່ານີ້ ຍ້ອນອະວິດຊານັ້ນເອງ ດັບໄປບໍ່ເຫຼືອດ້ວຍວິຣາຄະ ກາຍເຊິ່ງເປັນປັດໄຈໃຫ້ສຸກ ແລະ ທຸກທີ່ເປັນໄປໃນພາຍໃນເກີດຂຶ້ນນັ້ນ ຈຶ່ງບໍ່ມີວາຈາເຊິ່ງເປັນປັດໄຈໃຫ້ສຸກ ແລະ ທຸກທີ່ເປັນໄປໃນພາຍໃນເກີດຂຶ້ນນັ້ນ ຈຶ່ງບໍ່ມີ ມະໂນເຊິ່ງເປັນປັດໄຈໃຫ້ສຸກ ແລະ ທຸກທີ່ເປັນໄປໃນພາຍໃນເກີດຂຶ້ນນັ້ນ ຈຶ່ງບໍ່ມີ ເຂດບໍ່ມີ ຯລຯ ວັດຖຸບໍ່ມີ ຯລຯ ອາຍະຕະນະບໍ່ມີ ຯລຯ ຫຼື ອະທິກອນເຊິ່ງເປັນປັດໄຈໃຫ້ສຸກ ແລະ ທຸກທີ່ເປັນໄປໃນພາຍໃນເກີດຂຶ້ນນັ້ນ ບໍ່ມີ

**ພູມິຊະສູດທີ ໕ ຈົບ**

# ໖. ອຸປະວານະສູດ

## ວ່າດ້ວຍພຣະອຸປະວານະ

[໘໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ຄັ້ງນັ້ນ ທ່ານພຣະອຸປະວານະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ສະມະນະພາມພວກໜຶ່ງບັນຍັດວ່າ ທຸກເປັນສິ່ງທີ່ຕົນເຮັດເອງ ສະມະນະພາມພວກໜຶ່ງບັນຍັດວ່າ ທຸກເປັນສິ່ງທີ່ຄົນອື່ນເຮັດໃຫ້ ສະມະນະພາມພວກໜຶ່ງບັນຍັດວ່າ ທຸກເປັນສິ່ງທີ່ຕົນເຮັດເອງ ແລະ ເປັນສິ່ງທີ່ຄົນອື່ນເຮັດໃຫ້ ສະມະນະພາມອີກພວກໜຶ່ງບັນຍັດວ່າ ທຸກເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນ

ໃນວາທະເຫຼົ່ານີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແນວໃດ ຕັດບອກໄວ້ແນວໃດ ແລະຂ້າພຣະອົງທັງຫຼາຍຈະຕອບແນວໃດ? ຈຶ່ງຈະຊື່ວ່າເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ທັງບໍ່ແມ່ນການເວົ້າໄປຕາມຄຳເຊັ່ນນັ້ນ ທີ່ຈະເປັນເຫດໃຫ້ຖືກຕຳໜິໄດ້

ອຸປະວານະ ເຮົາກ່າວວ່າທຸກເປັນສະພາວະທີ່ອາໄສປັດໄຈເກີດຂຶ້ນ ອາໄສປັດໄຈອັນໃດ ຄື ອາໄສຜັດສະ ບຸກຄົນຜູ້ກ່າວຄຳເວົ້າແບບນີ້ ຈຶ່ງຊື່ວ່າເວົ້າກົງຕາມທີ່ເຮົາກ່າວໄວ້ ບໍ່ຊື່ວ່າ ກ່າວຕູ່ເຮົາດ້ວຍຄຳຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ທັງບໍ່ມີການຄວນຕາມ ຄຳເຊັ່ນນັ້ນທີ່ຈະເປັນເຫດໃຫ້ຖືກຕຳໜິໄດ້

ໃນວາທະທັງ ໔ ນັ້ນ ທຸກທີ່ພວກສະມະນະພາມບັນຍັດວ່າ ເປັນສິ່ງທີ່ຕົນເຮັດເອງກໍເກີດຂຶ້ນ ຍ້ອນຜັດສະເປັນປັດໄຈ ທຸກທີ່ພວກສະມະນະພາມ ຯລຯ ທຸກທີ່ພວກສະມະນະພາມ ຯລຯ ທຸກທີ່ພວກສະມະນະພາມເຫຼົ່ານັ້ນ ບັນຍັດວ່າເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະຄົນອື່ນເຮັດໃຫ້ກໍບໍ່ແມ່ນ ກໍເກີດຂຶ້ນຍ້ອນຜັດສະເປັນປັດໄຈ

ອຸປະວານະ ໃນວາທະທັງ ໔ ນັ້ນ ເປັນໄປບໍ່ໄດ້ທີ່ສະມະນະພາມບັນຍັດວ່າ ທຸກເປັນສິ່ງທີ່ຕົນເຮັດເອງ ຈະສະເຫວີຍທຸກເວັ້ນຈາກຜັດສະ ຯລຯ ເປັນໄປບໍ່ໄດ້ທີ່ສະມະນະພາມ ຯລຯ ເປັນໄປບໍ່ໄດ້ທີ່ສະມະນະພາມ ຯລຯ ເປັນໄປບໍ່ໄດ້ທີ່ສະມະນະພາມບັນຍັດວ່າ ທຸກເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ຈະສະເຫວີຍທຸກເວັ້ນຈາກຜັດສະ

**ອຸປະວານະສູດທີ ໖ ຈົບ**

# ໗. ປັດຈະຍະສູດ

## ວ່າດ້ວຍປັດໄຈ

[໔໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ
ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ຊະຣາແລະມໍລະນະ ເປັນແນວໃດ?

ຄື ຄວາມແກ່ ຄວາມຊຸດໂຊມ ຄວາມມີແຂ້ວຫຼ່ອນ ຄວາມມີຜົມຫງອກ ຄວາມມີໜັງຫ່ຽວຍານ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊະຣາ

ຄວາມຈຸຕິ ຄວາມເຄື່ອນໄປ ຄວາມທຳລາຍໄປ ຄວາມຫາຍໄປ ຄວາມຕາຍກ່າວຄືຄວາມຕາຍ ການທຳກາລະ ຄວາມແຕກແຫ່ງຂັນ ຄວາມປະຖິ້ມຮ່າງກາຍ ຄວາມຂາດແຫ່ງຊີວິຕິນຊີຂອງເຫຼົ່າສັດນັ້ນ ໆ ຈາກໝູ່ສັດນັ້ນ ໆ ນີ້ຮຽກວ່າ ມໍລະນະ

ດັ່ງພັນລະນາມານີ້ ນີ້ຮຽກວ່າ ຊະຣາແລະມໍລະນະ

ຍ້ອນຊາດເກີດ ຊະຣາແລະມໍລະນະຈຶ່ງເກີດ ຍ້ອນຊາດດັບ ຊະຣາແລະມໍລະນະຈຶ່ງດັບ

ອະຣິຍະມັກມີອົງ ໘ ນີ້ ຄື

| | | | |
|---|---|---|---|
| ໑. ສຳມາທິດຖິ | (ເຫັນຖືກ) | ໒. ສຳມາສັງກັບປະ | (ຄິດຖືກ) |
| ໓. ສຳມາວາຈາ | (ວາຈາຖືກ) | ໔. ສຳມາກຳມັນຕະ | (ການງານຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີວິດຖືກ) | ໖. ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. ສຳມາສະຕິ | (ຣະນຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |

ຊື່ວ່າປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ

ຊາດເປັນແນວໃດ? ฯລฯ ພົບເປັນແນວໃດ? ฯລฯ ອຸປາທານເປັນແນວໃດ? ฯລฯ ຕັນຫາເປັນແນວໃດ? ฯລฯ ເວທະນາເປັນແນວໃດ? ฯລฯ ຜັດສະເປັນແນວໃດ? ฯລฯ ສະລາຍະຕະນະເປັນແນວໃດ? ฯລฯ ນາມຮູບເປັນແນວໃດ? ฯລฯ ວິນຍານເປັນແນວໃດ?

ສັງຂານທັງຫຼາຍ ມີທີ່ໃດ?

ສັງຂານມີ ໓ ປະການນີ້ ຄື

໑. ກາຍສັງຂານ (ສະພາວະທີ່ປຸງແຕ່ງກາຍ)
໒. ວະຈີສັງຂານ (ສະພາວະທີ່ປຸງແຕ່ງວາຈາ)
໓. ຈິດຕະສັງຂານ (ສະພາວະທີ່ປຸງແຕ່ງໃຈ)

ນີ້ຮຽກວ່າ ສັງຂານທັງຫຼາຍ

ຍ້ອນອະວິດຊາເກີດ ສັງຂານຈຶ່ງເກີດ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ

ອະຣິຍະມັກມີອົງ ໘ ນີ້ ຄື

໑. ສຳມາທິດຖິ ฯລฯ ໘. ສຳມາສະມາທິ

ຊື່ວ່າປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ

ພິກຂຸທັງຫຼາຍ ເມື່ອໃດ ອະຣິຍະສາວົກຮູ້ແຈ້ງປັດໄຈແນວນີ້ ຮູ້ແຈ້ງຄວາມເກີດແຫ່ງປັດໄຈແນວນີ້ ຮູ້ແຈ້ງຄວາມດັບແຫ່ງປັດໄຈແນວນີ້ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງປັດໄຈແນວນີ້

ເມື່ອນັ້ນອະຣິຍະສາວົກນັ້ນ ເຮົາຮຽກວ່າ ເປັນຜູ້ເຖິງພ້ອມດ້ວຍທິດຖິແດ່ ຜູ້ເຖິງພ້ອມດ້ວຍທັດສະນະແດ່ ຜູ້ເຖິງສັດທຳນີ້ແດ່ ເຫັນສັດທຳນີ້ແດ່ ປະກອບດ້ວຍຍານອັນເປັນເສຂະແດ່ ປະກອບດ້ວຍວິດຊາອັນເປັນເສຂະແດ່ ບັນລຸກະແສແຫ່ງທຳແດ່ ເປັນພຣະອະຣິຍະຜູ້ມີປັນຍາເພິກຖອນກິເລດໄດ້ແລ້ວແດ່ ດຳລົງຢູ່ໃກ້ປະຕູອະມະຕະນິບພານແດ່

**ປັດຈະຍະສູດທີ ໗ ຈົບ**

# ໘. ພິກຂຸສູດ

## ວ່າດ້ວຍພິກຂຸ

[໔໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ຯລຯ

ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ຮູ້ແຈ້ງຊະຣາແລະມໍລະນະ ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະ ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງ ຊະຣາແລະມໍລະນະ ຮູ້ແຈ້ງຊາດ ຯລຯ ຮູ້ແຈ້ງພົບ ຯລຯ ຮູ້ແຈ້ງອຸປາທານ ຯລຯ ຮູ້ແຈ້ງຕັນຫາ ຯລຯ ຮູ້ແຈ້ງເວທະນາ ຯລຯ ຮູ້ແຈ້ງຜັດສະ ຯລຯ ຮູ້ແຈ້ງສະລາຍະຕະນະ ຯລຯ ຮູ້ແຈ້ງນາມຮູບ ຯລຯ ຮູ້ແຈ້ງວິນຍານ ຯລຯ ຮູ້ແຈ້ງສັງຂານທັງຫຼາຍ ຮູ້ແຈ້ງຄວາມເກີດແຫ່ງສັງຂານ ຮູ້ແຈ້ງຄວາມດັບແຫ່ງສັງຂານ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ

ຊະຣາແລະມໍລະນະ ເປັນແນວໃດ?

ຄື ຄວາມແກ່ ຄວາມຊຸດໂຊມ ຄວາມມີແຂ້ວຫຼ່ອນ ຄວາມມີຜົມຫງອກ ຄວາມມີໜັງຫ່ຽວຍານ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊະຣາ

ຄວາມຈຸຕິ ຄວາມເຄື່ອນໄປ ຄວາມທຳລາຍໄປ ຄວາມຫາຍໄປ ຄວາມຕາຍກ່າວຄືຄວາມຕາຍ ການທຳກາລະ ຄວາມແຕກແຫ່ງຂັນ ຄວາມປະຖິ້ມຮ່າງກາຍ ຄວາມຂາດແຫ່ງ ຊີວິຕິນຊີຂອງເຫຼົ່າສັດນັ້ນ ໆ ຈາກໝູ່ສັດນັ້ນ ໆ ນີ້ຮຽກວ່າ ມໍລະນະ

ດັ່ງພັນລະນາມານີ້ ນີ້ຮຽກວ່າ ຊະຣາແລະມໍລະນະ

ຍ້ອນຊາດເກີດ ຊະຣາແລະມໍລະນະຈຶ່ງເກີດ ຍ້ອນຊາດດັບ ຊະຣາແລະມໍລະນະຈຶ່ງດັບ

ອະຣິຍະມັກມີອົງ ๘ ນີ້ ຄື

໑. ສຳມາທິດຖິ ฯລฯ ๘. ສຳມາສະມາທິ

ຊື່ວ່າປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ

ຊາດເປັນແນວໃດ? ฯລฯ ພົບເປັນແນວໃດ? ฯລฯ ອຸປາທານເປັນແນວໃດ? ฯລฯ ຕັນຫາເປັນແນວໃດ? ฯລฯ ເວທະນາເປັນແນວໃດ? ฯລฯ ຜັດສະເປັນແນວໃດ? ฯລฯ ສະລາຍະຕະນະເປັນແນວໃດ? ฯລฯ ນາມຮູບເປັນແນວໃດ? ฯລฯ ວິນຍານເປັນແນວໃດ?

ສັງຂານທັງຫຼາຍ ມີທີ່ໃດ?

ສັງຂານມີ ໓ ປະການນີ້ ຄື

໑. ກາຍສັງຂານ
໒. ວະຈີສັງຂານ
໓. ຈິດຕະສັງຂານ

ນີ້ຮຽກວ່າ ສັງຂານທັງຫຼາຍ

ຍ້ອນອະວິດຊາເກີດ ສັງຂານຈຶ່ງເກີດ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ

ອະຣິຍະມັກມີອົງ ๘ ນີ້ ຄື

໑. ສຳມາທິດຖິ ฯລฯ ๘. ສຳມາສະມາທິ

ຊື່ວ່າປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ

ພິກຂຸທັງຫຼາຍ ເມື່ອໃດພິກຂຸຮູ້ແຈ້ງຊະຣາແລະມໍລະນະແນວນີ້ ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະແນວນີ້ ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະແນວນີ້ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະແນວນີ້ ฯລฯ ຮູ້ແຈ້ງຊາດແນວນີ້ ฯລฯ ຮູ້ແຈ້ງພົບ ฯລฯ ອຸປາທານ ฯລฯ ຕັນຫາ ฯລฯ ເວທະນາ ฯລฯ ຜັດສະ ฯລฯ ສະລາຍະຕະນະ ฯລฯ ນາມຮູບ ฯລฯ ວິນຍານ ฯລฯ ຮູ້ແຈ້ງສັງຂານທັງຫຼາຍແນວນີ້ ຮູ້ແຈ້ງຄວາມເກີດແຫ່ງສັງຂານແນວນີ້ ຮູ້ແຈ້ງຄວາມດັບແຫ່ງສັງຂານແນວນີ້ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານແນວນີ້

ເມື່ອນັ້ນ ພິກຂຸນີ້ເຮົາຮຽກວ່າ ເປັນຜູ້ເຖິງພ້ອມດ້ວຍທິດຖິແດ່ ຜູ້ເຖິງພ້ອມດ້ວຍທັດສະນະແດ່ ຜູ້ເຖິງສັດທຳນີ້ແດ່ ເຫັນສັດທຳນີ້ແດ່ ປະກອບດ້ວຍຍານອັນເປັນເສຂະແດ່ ປະກອບດ້ວຍ

ວິດຊາອັນເປັນເສຂະແດ່ ບັນລຸກະແສແຫ່ງທຳແດ່ ເປັນພຣະອະຣິຍະຜູ້ມີປັນຍາເພິກຖອນກິເລດ ໄດ້ແລ້ວແດ່ ດຳລົງຢູ່ໃກ້ປະຕູອະມະຕະນິບພານແດ່

**ພິກຂຸສູດທີ່ ๓ ຈົບ**

## ໗. ສະມະນະພາມມະນະສູດ

### ວ່າດ້ວຍສະມະນະພາມ

[໘໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ຯລຯ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງຊາດ ຯລຯ ບໍ່ຮູ້ແຈ້ງພົບ ຯລຯ ອຸປາທານ ຯລຯ ຕັນຫາ ຯລຯ ເວທະນາ ຯລຯ ຜັດສະ ຯລຯ ສະລາຍະຕະນະ ຯລຯ ນາມຮູບ ຯລຯ ວິນຍານ ຯລຯ ບໍ່ຮູ້ແຈ້ງສັງຂານທັງຫຼາຍ ບໍ່ຮູ້ແຈ້ງຄວາມເກີດແຫ່ງສັງຂານ ບໍ່ຮູ້ແຈ້ງຄວາມດັບແຫ່ງສັງຂານ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ

ສະມະນະຫຼືພາມເຫຼົ່ານັ້ນ ບໍ່ຈັດວ່າເປັນສະມະນະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ແລະ ທ່ານເຫຼົ່ານັ້ນ ກໍບໍ່ເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ຫຼື ປະໂຫຍດຂອງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ຮູ້ແຈ້ງຊະຣາແລະມໍລະນະ ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະ ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ ຮູ້ແຈ້ງຊາດ ຯລຯ ຮູ້ແຈ້ງພົບ ຯລຯ ອຸປາທານ ຯລຯ ຕັນຫາ ຯລຯ ເວທະນາ ຯລຯ ຜັດສະ ຯລຯ ສະລາຍະຕະນະ ຯລຯ ນາມຮູບ ຯລຯ ວິນຍານ ຯລຯ ຮູ້ແຈ້ງສັງຂານທັງຫຼາຍ ຮູ້ແຈ້ງຄວາມເກີດແຫ່ງສັງຂານ ຮູ້ແຈ້ງຄວາມດັບແຫ່ງສັງຂານ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່ານັ້ນ ຈັດວ່າເປັນສະມະນະໃນໝູ່ສະມະນະ ແລະຈັດວ່າເປັນພາມໃນໝູ່ພາມ ແລະ ທ່ານເຫຼົ່ານັ້ນກໍເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ແລະປະໂຫຍດຂອງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

**ສະມະນະພາມມະນະສູດທີ ໗ ຈົບ**

# ໑໐. ທຸຕິຍະສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໘

[໖໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ຯລຯ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ ສະມະນະຫຼືພາມເຫຼົ່ານັ້ນ ຈັກກ້າວລ່ວງຊະຣາແລະມໍລະນະ ດຳລົງຢູ່ ຂໍ້ນັ້ນເປັນໄປບໍ່ໄດ້

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງຊາດ ຯລຯ ບໍ່ຮູ້ແຈ້ງພົບ ຯລຯ ອຸປາທານ ຯລຯ ຕັນຫາ ຯລຯ ເວທະນາ ຯລຯ ຜັດສະ ຯລຯ ສະລາຍະຕະນະ ຯລຯ ນາມຮູບ ຯລຯ ວິນຍານ ຯລຯ ບໍ່ຮູ້ແຈ້ງສັງຂານທັງຫຼາຍ ບໍ່ຮູ້ແຈ້ງຄວາມເກີດແຫ່ງສັງຂານ ບໍ່ຮູ້ແຈ້ງຄວາມດັບແຫ່ງສັງຂານ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ສະມະນະຫຼືພາມເຫຼົ່ານັ້ນ ຈັກກ້າວລ່ວງສັງຂານທັງຫຼາຍ ດຳລົງຢູ່ ຂໍ້ນັ້ນເປັນໄປບໍ່ໄດ້

ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ຮູ້ແຈ້ງຊະຣາແລະມໍລະນະ ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະ ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບ ແຫ່ງຊະຣາແລະມໍລະນະ ສະມະນະຫຼືພາມເຫຼົ່ານັ້ນ ຈັກກ້າວລ່ວງຊະຣາແລະມໍລະນະດຳລົງຢູ່ ຂໍ້ນັ້ນເປັນໄປໄດ້

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ຮູ້ແຈ້ງຊາດ ຯລຯ ຮູ້ແຈ້ງພົບ ຯລຯ ອຸປາທານ ຯລຯ ຕັນຫາ ຯລຯ ເວທະນາ ຯລຯ ຜັດສະ ຯລຯ ສະລາຍະຕະນະ ຯລຯ ນາມຮູບ ຯລຯ ວິນຍານ ຯລຯ ຮູ້ແຈ້ງສັງຂານທັງຫຼາຍ ຮູ້ແຈ້ງຄວາມເກີດແຫ່ງສັງຂານ ຮູ້ແຈ້ງຄວາມດັບແຫ່ງສັງຂານ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ສະມະນະຫຼືພາມເຫຼົ່ານັ້ນ ຈັກກ້າວລ່ວງສັງຂານທັງຫຼາຍດຳລົງຢູ່ ຂໍ້ນັ້ນ ເປັນໄປໄດ້

**ທຸຕິຍະສະມະນະພາມມະນະສູດທີ ໑໐ ຈົບ**

**ທະສະພົນວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ທະສະພົນສູດ
໒. ອຸປະນິດສູດ
໓. ພູມິຊະສູດ
໔. ປັດຈະຍະສູດ
໕. ສະມະນະພາມມະນະສູດ
໖. ທຸຕິຍະທະສະພົນສູດ
໗. ອັນຍະຕິດຖິຍະສູດ
໘. ອຸປະວານະສູດ
໙. ພິກຂຸສູດ
໑໐. ທຸຕິຍະສະມະນະພາມມະນະສູດ

# ໔. ກະລາຣະຂັດຕິຍະວັກ

## ໝວດວ່າດ້ວຍພຣະກະລາຣະຂັດຕິຍະ

## ໑. ພູຕະສູດ

### ວ່າດ້ວຍພູຕະ

[໓໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງຮຽກທ່ານພຣະສາຣີບຸດມາດ້ວຍຕັດວ່າ ສາຣີບຸດ ອະຊິຕະມານົບໄດ້ກ່າວຄາຖານີ້ໄວ້ໃນອະຊິຕະປັນຫາ ປາຣາຍະນະວັກ ວ່າ

ມີພຣະອະຣະຫັນຕະຂີນາສົບເຫຼົ່າໃດ ຜູ້ມີສັງຂາດທຳ
ແລະ ມີພຣະເສຂະເຫຼົ່າໃດ ທີ່ມີຢູ່ເປັນຈຳນວນຫຼາຍໃນບ່ອນນີ້
ຂ້າແດ່ ພຣະອົງຜູ້ນິຣະທຸກ ຂ້າພຣະອົງທູນຖາມແລ້ວ
ຂໍພຣະອົງຜູ້ມີປັນຍາ ໂຜດຕັດບອກການດຳເນີນຊີວິດ
ຂອງພຣະອະຣະຫັນຕະຂີນາສົບ ແລະ ພຣະເສຂະເຫຼົ່ານັ້ນດ້ວຍເທີ້ນ

ທ່ານຈັກຮູ້ເນື້ອຄວາມແຫ່ງຄາຖາທີ່ກ່າວໂດຍຫຍໍ້ນີ້ ໂດຍພິດສະດານໄດ້ແນວໃດ?

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະສາຣີບຸດໄດ້ມິດຢູ່ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດກັບທ່ານພຣະສາຣີບຸດເປັນຄັ້ງທີ່ ໒ ຯລຯ

ແມ່ນເທື່ອທີ ໒ ທ່ານພຣະສາຣີບຸດກໍໄດ້ມິດຢູ່

ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດກັບທ່ານພຣະສາຣີບຸດເປັນເທື່ອທີ ໓ ວ່າ ສາຣີບຸດ ອະຊິຕະມານົບ ໄດ້ກ່າວຄາຖານີ້ໄວ້ໃນອະຊິຕະປັນຫາ ປາຣາຍະນະວັກ ວ່າ

ມີພຣະອະຣະຫັນຕະຂີນາສົບເຫຼົ່າໃດ ຜູ້ມີສັງຂາດທຳ
ແລະ ມີພຣະເສຂະເຫຼົ່າໃດ ທີ່ມີຢູ່ເປັນຈຳນວນຫຼາຍໃນບ່ອນນີ້
ຂ້າແດ່ ພຣະອົງຜູ້ນິຣະທຸກ ຂ້າພຣະອົງທູນຖາມແລ້ວ
ຂໍພຣະອົງຜູ້ມີປັນຍາ ໂຜດຕັດບອກການດຳເນີນຊີວິດ
ຂອງພຣະອະຣະຫັນຕະຂີນາສົບ ແລະ ພຣະເສຂະເຫຼົ່ານັ້ນດ້ວຍເທີ້ນ

ທ່ານຈັກຮູ້ເນື້ອຄວາມແຫ່ງຄາຖາທີ່ກ່າວໂດຍຫຍໍ້ນີ້ ໂດຍພິດສະດານໄດ້ແນວໃດ?

ເມື່ອພຣະຜູ້ມີພຣະພາກເຈົ້າຕັດ ແນວນີ້ແລ້ວ ທ່ານພຣະສາຣີບຸດກໍຍັງມິດຢູ່ຮອດ ໓ ເທື່ອ

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ສາຣີບຸດ ທ່ານເຫັນແມ່ນບໍວ່າ ນີ້ຄື ພູຕະ

ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ນີ້ຄື ພູຕະ ເມື່ອເຫັນແນວນັ້ນແລ້ວ ຈຶ່ງປະຕິບັດເພື່ອຄວາມເບື່ອໜ່າຍ ຄາຍກຳໜັດ ເພື່ອດັບພູຕະ ບຸກຄົນເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ພູຕະນີ້ເກີດຍ້ອນອາຫານນັ້ນ ເມື່ອເຫັນແນວນັ້ນແລ້ວ ຈຶ່ງປະຕິບັດເພື່ອຄວາມເບື່ອໜ່າຍ ຄາຍກຳໜັດ ເພື່ອດັບພູຕະທີ່ເກີດຍ້ອນອາຫານນັ້ນ ບຸກຄົນເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ພູຕະໃດເກີດແລ້ວ ພູຕະນັ້ນມີຄວາມດັບເປັນທຳມະດາ ຍ້ອນຄວາມດັບແຫ່ງອາຫານນັ້ນ ເມື່ອເຫັນແນວນັ້ນແລ້ວ ຈຶ່ງປະຕິບັດເພື່ອຄວາມເບື່ອໜ່າຍ ຄາຍກຳໜັດ ເພື່ອດັບພູຕະ ເຊິ່ງມີຄວາມດັບເປັນທຳມະດາຍ້ອນອາຫານນັ້ນດັບໄປ

ບຸກຄົນຊື່ວ່າ ເປັນເສຂະດ້ວຍການປະຕິບັດແນວນັ້ນ ຂ້ານ້ອຍ

ບຸກຄົນຊື່ວ່າ ມີສັງຂາດທຳເປັນແນວໃດ?

ຄື ບຸກຄົນເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ນີ້ຄື ພູຕະ ເມື່ອເຫັນແນວນັ້ນແລ້ວ ຈຶ່ງເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຄາຍກຳໜັດ ດັບ ຍ້ອນບໍ່ຖືໝັ້ນພູຕະ ບຸກຄົນເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ພູຕະນີ້ເກີດຍ້ອນອາຫານນັ້ນ ເມື່ອເຫັນແນວນັ້ນແລ້ວ ຈຶ່ງເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຄາຍກຳໜັດ ດັບ ຍ້ອນບໍ່ຖືໝັ້ນພູຕະທີ່ເກີດຍ້ອນອາຫານນັ້ນ ບຸກຄົນເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ພູຕະໃດເກີດແລ້ວ ພູຕະນັ້ນ ມີຄວາມດັບເປັນທຳມະດາ ຍ້ອນຄວາມດັບແຫ່ງອາຫານນັ້ນ ເມື່ອເຫັນແນວນີ້ແລ້ວ ຈຶ່ງເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຄາຍກຳໜັດ ດັບ ຍ້ອນບໍ່ຖືໝັ້ນພູຕະທີ່ມີຄວາມດັບເປັນທຳມະດາ ບຸກຄົນຊື່ວ່າ ມີສັງຂາດທຳ ເປັນແນວນີ້ ຂ້ານ້ອຍ

ຄາຖານີ້ອະຊິຕະມານົບກ່າວໄວ້ໃນອະຊິຕະບັນຫາ ປາຣາຍະນະວັກວ່າ

ມີພຣະອະຣະຫັນຕະຂີນາສົບເຫຼົ່າໃດ ຜູ້ມີສັງຂາດທຳ
ແລະ ມີພຣະເສຂະເຫຼົ່າໃດ ທີ່ມີຢູ່ເປັນຈຳນວນຫຼາຍໃນບ່ອນນີ້
ຂ້າແດ່ ພຣະອົງຜູນີຣະທຸກ ຂ້າພຣະອົງທູນຖາມແລ້ວ
ຂໍພຣະອົງຜູ້ມີປັນຍາ ໂຜດຕັດບອກການດຳເນີນຊີວິດ
ຂອງພຣະອະຣະຫັນຕະຂີນາສົບ ແລະ ພຣະເສຂະເຫຼົ່ານັ້ນດ້ວຍເທີ້ນ

ຂ້າພຣະອົງ ຮູ້ເນື້ອຄວາມແຫ່ງຄາຖາທີ່ກ່າວໄວ້ໂດຍຫຍໍ້ນີ້ ໂດຍພິດສະດານແນວນີ້

"ດີແລ້ວ ດີແລ້ວ ສາຣີບຸດ ບຸກຄົນເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ນີ້ຄື ພູຕະ ເມື່ອເຫັນແນວນັ້ນແລ້ວ ຈຶ່ງປະຕິບັດເພື່ອຄວາມເບື່ອໜ່າຍ ຄາຍກຳໜັດ ເພື່ອດັບພູຕະ ບຸກຄົນເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ພູຕະນີ້ເກີດຍ້ອນອາຫານນັ້ນ ເມື່ອເຫັນແນວນັ້ນແລ້ວ ຈຶ່ງປະຕິບັດເພື່ອຄວາມເບື່ອໜ່າຍ ຄາຍກຳໜັດ ເພື່ອດັບພູຕະທີ່ເກີດຍ້ອນອາຫານນັ້ນ ບຸກຄົນເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ພູຕະໃດເກີດແລ້ວ ພູຕະນັ້ນມີຄວາມດັບເປັນທຳມະດາ ຍ້ອນຄວາມດັບແຫ່ງອາຫານນັ້ນ ເມື່ອເຫັນແນວນີ້ແລ້ວ ຈຶ່ງປະຕິ ບັດເພື່ອຄວາມເບື່ອໜ່າຍ ຄາຍກຳໜັດ ເພື່ອດັບພູຕະທີ່ມີຄວາມດັບເປັນທຳມະດາຍ້ອນອາຫານນັ້ນດັບໄປ

ບຸກຄົນຊື່ວ່າ ເປັນເສຂະດ້ວຍການປະຕິບັດ ແນວນີ້"

ບຸກຄົນຊື່ວ່າ ມີສັງຂາດທຳ ເປັນແນວໃດ?

ຄື ບຸກຄົນເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ນີ້ຄື ພູຕະ ເມື່ອເຫັນແນວນັ້ນແລ້ວ ຈຶ່ງເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຄາຍກຳໜັດ ດັບ ຍ້ອນບໍ່ຖືໝັ້ນພູຕະ ບຸກຄົນເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ພູຕະນີ້ເກີດຍ້ອນອາຫານນັ້ນ ເມື່ອເຫັນແນວນັ້ນແລ້ວ ຈຶ່ງເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຄາຍ ກຳໜັດ ດັບຍ້ອນບໍ່ຖືໝັ້ນພູຕະທີ່ເກີດຍ້ອນອາຫານນັ້ນ ບຸກຄົນເຫັນດ້ວຍປັນຍາໂດຍຖືກຕ້ອງ ຕາມຄວາມເປັນຈິງວ່າ ພູຕະໃດເກີດແລ້ວ ພູຕະນັ້ນ ມີຄວາມດັບເປັນທຳມະດາ ຍ້ອນຄວາມດັບແຫ່ງອາຫານນັ້ນ ເມື່ອເຫັນແນວນັ້ນແລ້ວ ຈຶ່ງເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຄາຍກຳໜັດ ດັບ ຍ້ອນບໍ່ຖືໝັ້ນພູຕະທີ່ມີຄວາມດັບເປັນທຳມະດາ

ບຸກຄົນຊື່ວ່າ ມີສັງຂາດທຳເປັນ ແນວນີ້

ຄາຖານີ້ ອະຊິຕະມານົບກ່າວໄວ້ໃນອະຊິຕະບັນຫາ ປາຣາຍະນະວັກ ວ່າ

ມີພຣະອະຣະຫັນຕະຂີນາສົບເຫຼົ່າໃດ ຜູ້ມີສັງຂາດທຳ
ແລະ ມີພຣະເສຂະເຫຼົ່າໃດ ທີ່ມີຢູ່ເປັນຈຳນວນຫຼາຍໃນບ່ອນນີ້
ຂ້າແດ່ ພຣະອົງຜູ້ນິຣະທຸກ ຂ້າພຣະອົງທູນຖາມແລ້ວ
ຂໍພຣະອົງຜູ້ມີປັນຍາ ໂຜດຕັດບອກການດຳເນີນຊີວິດ
ຂອງພຣະອະຣະຫັນຕະຂີນາສົບ ແລະ ພຣະເສຂະເຫຼົ່ານັ້ນດ້ວຍເທີ້ນ

ສາຣີບຸດ ທ່ານເພິ່ງເຫັນເນື້ອຄວາມແຫ່ງຄາຖາທີ່ກ່າວໂດຍຫຍໍ້ນີ້ ໂດຍພິດສະດານແນວນີ້ ໄວ້ເທີ້ນ

**ພູຕະສູດທີ ໑ ຈົບ**

# ໔. ກະລາຣະສູດ

## ວ່າດ້ວຍພຣະກະລາຣະ

[໓໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ຄັ້ງນັ້ນ ພຣະກະລາຣະຂັດຕິຍະເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາ ປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບ ທ່ານພຣະສາຣີບຸດດັ່ງນີ້ວ່າ ທ່ານສາຣີບຸດ ພຣະໂມລິຍະຜັກຄຸນະໄດ້ບອກຄືນສິກຂາ ກັບມາເປັນ ຄະຫຼືຫັດແລ້ວ

ທ່ານໂມລິຍະຜັກຄຸນະນັ້ນ ຄົງບໍ່ໄດ້ຄວາມພໍໃຈໃນພຣະທຳວິໄນນີ້ແລ້ວຕີບໍ

ຖ້າເຊັ່ນນັ້ນ ທ່ານສາຣີບຸດຄົງໄດ້ຄວາມພໍໃຈໃນພຣະທຳວິໄນນີ້ແລ້ວແມ່ນບໍ?

ທ່ານຜູ້ມີອາຍຸ ເຮົາ ບໍ່ສົງໄສເລີຍ

ທ່ານຜູ້ມີອາຍຸ ແລ້ວຕໍ່ໄປເດ ທ່ານຈັກມີຄວາມສົງໄສບໍ?

ທ່ານຜູ້ມີອາຍຸ ເຖິງຕໍ່ໄປເຮົາກໍບໍ່ສົງໄສ

ລຳດັບນັ້ນ ພຣະກະລາຣະຂັດຕິຍະລຸກຈາກອາສະນະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກ ເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະສາຣີບຸດພະຍາກອນອະຣະຫັດຕະຜົນ ເຮົາຮູ້ແຈ້ງ ວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດໄດ້ແລ້ວ ບໍ່ມີກິດອື່ນເພື່ອ ຄວາມເປັນແນວນີ້ອີກຕໍ່ໄປ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງໃຫ້ຮຽກພິກຂຸອົງໜຶ່ງມາຕັດວ່າ ມາເທີ້ນພິກຂຸ ທ່ານຈົ່ງໄປຮຽກສາຣີບຸດມາຕາມຄຳຂອງເຮົາວ່າ ທ່ານສາຣີບຸດ ພຣະສາດສະດາຮັບສັ່ງໃຫ້ທ່ານ ເຂົ້າເຝົ້າ ພິກຂຸນັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່

ແລ້ວຮຽນວ່າ ທ່ານສາຣີບຸດ ພຣະສາດສະດາຮັບສັ່ງໃຫ້ທ່ານເຂົ້າເຝົ້າ ທ່ານພຣະສາຣີບຸດຮັບຄໍາ ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ສາຣີບຸດໄດ້ຂ່າວວ່າ ທ່ານພະຍາກອນອະຣະຫັດຕະຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດໄດ້ແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ແມ່ນບໍ?

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ໄດ້ກ່າວເນື້ອຄວາມໂດຍບົດ ໂດຍພະຍັນຊະນະໄວ້ແນວນັ້ນ

ສາຣີບຸດ ກຸນລະບຸດຍ່ອມພະຍາກອນອະຣະຫັດຕະຜົນໂດຍປະຣິຍາຍ (ໂດຍອ້ອມ) ແນວໃດແນວໜຶ່ງ ເມື່ອເປັນເຊັ່ນນັ້ນ ອະຣະຫັດຕະຜົນທີ່ທ່ານພະຍາກອນໄປແລ້ວ ບຸກຄົນເພິ່ງເຫັນຕາມທີ່ທ່ານພະຍາກອນໄວ້ແມ່ນບໍ?

ແມ່ນ ຂ້າພຣະອົງກໍໄດ້ຂາບທູນໄວ້ ແນວນີ້ບໍ່ແມ່ນບໍວ່າ ຂ້າພຣະອົງບໍ່ໄດ້ກ່າວເນື້ອຄວາມໂດຍບົດ ໂດຍພະຍັນຊະນະໄວ້ແນວນັ້ນ

ຖ້າມີຜູ້ຖາມທ່ານ ແນວນີ້ວ່າ ທ່ານສາຣີບຸດ ທ່ານຮູ້ເຫັນແນວໃດ ຈຶ່ງພະຍາກອນອະຣະຫັດຕະຜົນ ຂ້າພະເຈົ້າຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ເມື່ອຖືກຖາມແນວນີ້ ທ່ານເພິ່ງພະຍາກອນແນວໃດ?

ຖ້າມີຜູ້ຖາມຂ້າພຣະອົງ ແນວນີ້ວ່າ ທ່ານສາຣີບຸດ ທ່ານຮູ້ເຫັນແນວໃດ ຈຶ່ງພະຍາກອນອະຣະຫັດຕະຜົນ ຂ້າພະເຈົ້າຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຂ້າພຣະອົງຖືກຖາມແນວນີ້ແລ້ວເພິ່ງພະຍາກອນ ແນວນີ້ວ່າ ທ່ານຜູ້ມີອາຍຸ ຊາດມີສິ່ງໃດເປັນເຫດ ເມື່ອຕົ້ນເຫດແຫ່ງຊາດນັ້ນສິ້ນໄປແລ້ວ ຂ້າພະເຈົ້າຈຶ່ງຮູ້ວ່າ ຂ້າພະເຈົ້າເປັນຜູ້ໝົດແລ້ວ ຍ້ອນປັດໄຈແຫ່ງຊາດນັ້ນສິ້ນໄປແລ້ວ ເມື່ອຮູ້ວ່າ ຂ້າພະເຈົ້າເປັນຜູ້ໝົດແລ້ວ ຂ້າພະເຈົ້າຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ເມື່ອຂ້າພຣະອົງ ຖືກຖາມແນວນີ້ ກໍເພິ່ງພະຍາກອນແນວນີ້ ຂ້ານ້ອຍ

ຖ້າມີຜູ້ຖາມທ່ານ ແນວນີ້ວ່າ ທ່ານສາຣີບຸດ ກໍຊາດມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກໍາເນີດ ມີອັນໃດ? ເປັນແດນເກີດ ເມື່ອຖືກຖາມແນວນີ້ ທ່ານເພິ່ງພະຍາກອນແນວໃດ?

ຖ້າມີຜູ້ຖາມຂ້າພຣະອົງແນວນີ້ ຂ້າພຣະອົງເພິ່ງພະຍາກອນແນວນີ້ວ່າ ຊາດມີພົບເປັນເຫດ ມີພົບເປັນເຫດເກີດ ມີພົບເປັນກຳເນີດ ມີພົບເປັນແດນເກີດ

ຖ້າມີຜູ້ຖາມທ່ານແນວນີ້ວ່າ ທ່ານສາຣີບຸດ ກໍພົບເດ ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ ເມື່ອຖືກຖາມແນວນີ້ ທ່ານເພິ່ງພະຍາກອນແນວໃດ?

ຖ້າມີຜູ້ຖາມຂ້າພຣະອົງແນວນີ້ ຂ້າພຣະອົງເພິ່ງພະຍາກອນແນວນີ້ວ່າ ພົບມີອຸປາທານເປັນເຫດ ມີອຸປາທານເປັນເຫດເກີດ ມີອຸປາທານເປັນກຳເນີດ ມີອຸປາທານເປັນແດນເກີດ

ຖ້າມີຜູ້ຖາມທ່ານແນວນີ້ວ່າ ທ່ານສາຣີບຸດ ກໍອຸປາທານເດ ມີອັນໃດ? ເປັນເຫດ ຯລຯ ມີອັນໃດ? ເປັນແດນເກີດ ເມື່ອຖືກຖາມແນວນີ້ ທ່ານເພິ່ງພະຍາກອນແນວໃດ?

ຖ້າມີຜູ້ຖາມຂ້າພຣະອົງແນວນີ້ວ່າ ທ່ານສາຣີບຸດ ອຸປາທານເດ ມີອັນໃດ? ເປັນເຫດ ຯລຯ ມີອັນໃດ? ເປັນແດນເກີດ ຂ້າພຣະອົງຖືກຖາມແນວນີ້ ເພິ່ງພະຍາກອນແນວນີ້ວ່າ ອຸປາທານມີຕັນຫາເປັນເຫດ ຯລຯ ມີຕັນຫາເປັນແດນເກີດ

ຖ້າມີຜູ້ຖາມທ່ານແນວນີ້ວ່າ ທ່ານສາຣີບຸດ ກໍຕັນຫາເດ ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ ເມື່ອຖືກຖາມແນວນີ້ ທ່ານເພິ່ງພະຍາກອນແນວໃດ?

ຖ້າມີຜູ້ຖາມຂ້າພຣະອົງ ແນວນີ້ວ່າ ທ່ານສາຣີບຸດ ຕັນຫາມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ ຂ້າພຣະອົງຖືກຖາມແນວນີ້ ເພິ່ງພະຍາກອນ ແນວນີ້ວ່າ ຕັນຫາມີເວທະນາເປັນເຫດ ມີເວທະນາເປັນເຫດເກີດ ມີເວທະນາເປັນກຳເນີດ ມີເວທະນາເປັນແດນເກີດ

ຖ້າມີຜູ້ຖາມທ່ານ ແນວນີ້ວ່າ ທ່ານສາຣີບຸດ ກໍເວທະນາເດ ມີອັນໃດ? ເປັນເຫດ ຯລຯ ມີອັນໃດ? ເປັນແດນເກີດ ເມື່ອຖືກຖາມແນວນີ້ ທ່ານເພິ່ງພະຍາກອນແນວໃດ?

ຖ້າມີຜູ້ຖາມຂ້າພຣະອົງ ແນວນີ້ວ່າ ທ່ານສາຣີບຸດ ກໍເວທະນາເດ ມີອັນໃດ? ເປັນເຫດ ຯລຯ ມີອັນໃດ? ເປັນແດນເກີດ ຂ້າພຣະອົງຖືກຖາມແນວນີ້ ເພິ່ງພະຍາກອນແນວນີ້ວ່າ ເວທະນາມີຜັດສະເປັນເຫດ ຯລຯ ມີຜັດສະເປັນແດນເກີດ

ຖ້າມີຜູ້ຖາມທ່ານ ແນວນີ້ວ່າ ທ່ານສາຣີບຸດ ທ່ານຮູ້ເຫັນແນວໃດ ຄວາມເພີດເພີນໃນເວທະນາຈຶ່ງບໍ່ປາກົດ ເມື່ອຖືກຖາມແນວນີ້ ທ່ານເພິ່ງພະຍາກອນແນວໃດ?

ຖ້າມີຜູ້ຖາມຂ້າພຣະອົງແນວນີ້ວ່າ ທ່ານສາຣີບຸດ ທ່ານຮູ້ເຫັນແນວໃດ? ຄວາມເພີດເພີນໃນເວທະນາຈຶ່ງບໍ່ປາກົດ ຂ້າພຣະອົງຖືກຖາມແນວນີ້ ເພິ່ງພະຍາກອນແນວນີ້ວ່າ ເວທະນາມີ ໓ ປະການ

ເວທະນາ ໓ ປະການອັນໃດແດ່ ຄື

໑. ສຸກຂະເວທະນາ
໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ເວທະນາທັງ ໓ ປະການນີ້ ເປັນສະພາວະບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ຄວາມເພີດເພີນໃນເວທະນາທັງຫຼາຍຈຶ່ງບໍ່ປາກົດ

ດີແລ້ວ ດີແລ້ວ ສາຣີບຸດ ຕາມທີ່ທ່ານພະຍາກອນຄວາມຂໍ້ນັ້ນໂດຍຫຍໍ້ ກໍໄດ້ໃຈຄວາມດັ່ງນີ້ວ່າ ເວທະນາແນວໃດແນວໜຶ່ງ ລ້ວນເປັນທຸກ

ອັນໜຶ່ງ ຖ້າມີຜູ້ຖາມທ່ານແນວນີ້ວ່າ ທ່ານສາຣີບຸດ ຍ້ອນຄວາມລຸດພົ້ນຢ່າງໃດ? ທ່ານຈຶ່ງພະຍາກອນອະຣະຫັດຕະຜົນ ຂ້າພະເຈົ້າຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ເມື່ອຖືກຖາມແນວນີ້ ທ່ານເພິ່ງພະຍາກອນແນວໃດ?

ຖ້າມີຜູ້ຖາມຂ້າພຣະອົງແນວນີ້ວ່າ ທ່ານສາຣີບຸດ ຍ້ອນຄວາມລຸດພົ້ນຢ່າງໃດ ທ່ານຈຶ່ງພະຍາກອນອະຣະຫັດຕະຜົນ ຂ້າພະເຈົ້າຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຂ້າພຣະອົງຖືກຖາມແນວນີ້ ເພິ່ງພະຍາກອນ ແນວນີ້ວ່າ ອາສະວະທັງຫຼາຍບໍ່ຄອບງຳທ່ານຜູ້ມີສະຕິຢູ່ແນວໃດ ເຮົາກໍເປັນຜູ້ມີສະຕິຢູ່ແນວນັ້ນ ຍ້ອນຄວາມລຸດພົ້ນໃນພາຍໃນ ຍ້ອນອຸປາທານທັງປວງສິ້ນໄປ ແລະເຮົາກໍບໍ່ໄດ້ດູໝິ່ນຕົນເອງດ້ວຍ ເມື່ອຖືກຖາມແນວນີ້ ຂ້າພຣະອົງເພິ່ງພະຍາກອນແນວນີ້ ຂ້ານ້ອຍ

ດີແລ້ວ ດີແລ້ວ ສາຣີບຸດ ຕາມທີ່ທ່ານພະຍາກອນຄວາມຂໍ້ນັ້ນໂດຍຫຍໍ້ ກໍໄດ້ໃຈຄວາມດັ່ງນີ້ວ່າ ອາສະວະເຫຼົ່າໃດອັນພຣະສະມະນະກ່າວແລ້ວ ຂ້າພະເຈົ້າບໍ່ສົງໄສ ບໍ່ເຄືອບແຄງ ໃນອາສະວະເຫຼົ່ານັ້ນວ່າ ອາສະວະເຫຼົ່ານັ້ນ ຂ້າພະເຈົ້າລະໄດ້ແລ້ວຫຼືບໍ່

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາເມື່ອຕັດພາສິດນີ້ແລ້ວ ໄດ້ສະເດັດລຸກຂຶ້ນຈາກບ່ອນປະທັບ ສະເດັດເຂົ້າໄປສູ່ພຣະວິຫານ

ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ພຣະວິຫານໄດ້ບໍ່ດົນປານໃດ ທ່ານພຣະສາຣີບຸດໄດ້ກ່າວກັບພິກຂຸທັງຫຼາຍໃນບ່ອນນັ້ນວ່າ ທ່ານຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມບັນຫາຂໍ້ທໍາອິດກັບຂ້ານ້ອຍ ເຊິ່ງຂ້ານ້ອຍຍັງບໍ່ເຄີຍຮູ້ມາກ່ອນ ຂ້ານ້ອຍຈຶ່ງທູນຕອບບັນຫາລ່າຊ້າໄປ ຕໍ່ເມື່ອພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາບັນຫາຂໍ້ທໍາອິດຂອງຂ້ານ້ອຍແລ້ວ ຂ້ານ້ອຍຈຶ່ງຄິດໄດ້ວ່າ ຖ້າພຣະຜູ້ມີພຣະພາກເຈົ້າຈະເພິ່ງຕັດຖາມຄວາມຂໍ້ນັ້ນກັບຂ້ານ້ອຍດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ຕະຫຼອດເບິດມື້ ແມ່ນຂ້ານ້ອຍກໍເພິ່ງທູນຕອບຄວາມຂໍ້ນັ້ນຖວາຍພຣະຜູ້ມີພຣະພາກເຈົ້າໄດ້ດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ເບິດມື້

ແມ່ນຖ້າ ພຣະຜູ້ມີພຣະພາກເຈົ້າ ຈະເພິ່ງຕັດຖາມຄວາມຂໍ້ນັ້ນກັບຂ້ານ້ອຍດ້ວຍບົດອື່ນ ໆ ດ້ວຍປະຣິຍາຍ ອື່ນ ໆ ເບິດຄືນ ແມ່ນຂ້ານ້ອຍກໍເພິ່ງທູນຕອບຄວາມຂໍ້ນັ້ນຖວາຍພຣະຜູ້ມີພຣະພາກເຈົ້າໄດ້ດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ເບິດຄືນ

ແມ່ນຖ້າ ພຣະຜູ້ມີພຣະພາກເຈົ້າ ຈະເພິ່ງຕັດຖາມຄວາມຂໍ້ນັ້ນກັບຂ້ານ້ອຍດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ເບິດມື້ເບິດຄືນ ແມ່ນຂ້ານ້ອຍກໍເພິ່ງທູນຕອບຄວາມຂໍ້ນັ້ນຖວາຍພຣະຜູ້ມີພຣະພາກເຈົ້າເຈົ້າໄດ້ດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ເບິດມື້ເບິດຄືນ

ແມ່ນຖ້າ ພຣະຜູ້ມີພຣະພາກເຈົ້າ ຈະເພິ່ງຕັດຖາມຄວາມຂໍ້ນັ້ນກັບຂ້ານ້ອຍຕະຫຼອດ ໒ ຄືນ ໒ ມື້ ຯລຯ ແມ່ນຂ້ານ້ອຍ ກໍເພິ່ງທູນຕອບຄວາມຂໍ້ນັ້ນ ຖວາຍພຣະຜູ້ມີພຣະພາກເຈົ້າໄດ້ຕະຫຼອດ ໒ ຄືນ ໒ ມື້ ຯລຯ

ແມ່ນຖ້າ ພຣະຜູ້ມີພຣະພາກເຈົ້າ ຈະເພິ່ງຕັດຖາມຄວາມຂໍ້ນັ້ນກັບຂ້ານ້ອຍຕະຫຼອດ ໓ ຄືນ ໓ ມື້ ຯລຯ ແມ່ນຂ້ານ້ອຍ ກໍເພິ່ງທູນຕອບຄວາມຂໍ້ນັ້ນ ຖວາຍພຣະຜູ້ມີພຣະພາກເຈົ້າໄດ້ຕະຫຼອດ ໓ ຄືນ ໓ ມື້ ຯລຯ

ແມ່ນຖ້າ ພຣະຜູ້ມີພຣະພາກເຈົ້າຈະເພິ່ງຕັດຖາມຄວາມຂໍ້ນັ້ນກັບຂ້ານ້ອຍຕະຫຼອດ ໔ ຄືນ ໔ ມື້ ຯລຯ ແມ່ນຂ້ານ້ອຍກໍເພິ່ງທູນຕອບຄວາມຂໍ້ນັ້ນຖວາຍພຣະຜູ້ມີພຣະພາກເຈົ້າໄດ້ ຕະຫຼອດ ໔ ຄືນ ໔ ມື້ ຯລຯ

ແມ່ນຖ້າ ພຣະຜູ້ມີພຣະພາກເຈົ້າ ຈະເພິ່ງຕັດຖາມຄວາມຂໍ້ນັ້ນ ກັບຂ້ານ້ອຍຕະຫຼອດ ໕ ຄືນ ໕ ມື້ ຯລຯ ແມ່ນຂ້ານ້ອຍ ກໍເພິ່ງທູນຕອບຄວາມຂໍ້ນັ້ນ ຖວາຍພຣະຜູ້ມີພຣະພາກເຈົ້າໄດ້ຕະຫຼອດ ໕ ຄືນ ໕ ມື້ ຯລຯ

ແມ່ນຖ້າ ພຣະຜູ້ມີພຣະພາກເຈົ້າຈະເພິ່ງຕັດຖາມຄວາມຂໍ້ນັ້ນ ກັບຂ້ານ້ອຍຕະຫຼອດ ໖ ຄືນ ໖ ມື້ ໆລໆ ແມ່ນຂ້ານ້ອຍ ກໍເພິ່ງທູນຕອບຄວາມຂໍ້ນັ້ນ ຖວາຍພຣະຜູ້ມີພຣະພາກເຈົ້າໄດ້ຕະຫຼອດ ໖ ຄືນ ໖ ມື້ ໆລໆ

ແມ່ນຖ້າ ພຣະຜູ້ມີພຣະພາກເຈົ້າ ຈະເພິ່ງຕັດຖາມຄວາມຂໍ້ນັ້ນ ກັບຂ້ານ້ອຍດ້ວຍບົດອື່ນ ໆ ດ້ວຍປະຣິຍາຍ ອື່ນ ໆ ຕະຫຼອດ ໗ ຄືນ ໗ ມື້ ແມ່ນຂ້ານ້ອຍ ກໍເພິ່ງທູນຕອບຄວາມຂໍ້ນັ້ນ ຖວາຍພຣະຜູ້ມີພຣະພາກເຈົ້າ ໄດ້ດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ຕະຫຼອດ ໗ ຄືນ ໗ ມື້

ລຳດັບນັ້ນ ພຣະກະລາຣະຂັດຕິຍະລຸກຈາກອາສະນະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານສາຣີບຸດບັນລືສີຫະນາດວ່າ ທ່ານຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມບັນຫາຂໍ້ທຳອິດກັບຂ້ານ້ອຍ ເຊິ່ງຂ້ານ້ອຍຍັງບໍ່ເຄີຍຮູ້ມາກ່ອນ ຂ້ານ້ອຍ ຈຶ່ງທູນຕອບບັນຫາລ່າຊ້າໄປ ຕໍ່ເມື່ອພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາບັນຫາຂໍ້ທຳອິດຂອງເຂົ້ານ້ອຍແລ້ວ ຂ້ານ້ອຍ ຈຶ່ງຄິດໄດ້ວ່າ ຖ້າພຣະຜູ້ມີພຣະພາກເຈົ້າຈະເພິ່ງຕັດຖາມຄວາມຂໍ້ນັ້ນກັບຂ້ານ້ອຍດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ເບິດມື້ ແມ່ນຂ້ານ້ອຍກໍເພິ່ງທູນຕອບຄວາມຂໍ້ນັ້ນຖວາຍພຣະຜູ້ມີພຣະພາກເຈົ້າໄດ້ດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ເບິດມື້

ແມ່ນຖ້າ ພຣະຜູ້ມີພຣະພາກເຈົ້າ ໆລໆ ເບິດຄືນ ໆລໆ

ແມ່ນຖ້າ ພຣະຜູ້ມີພຣະພາກເຈົ້າ ໆລໆ ເບິດມື້ເບິດຄືນ ໆລໆ

ແມ່ນຖ້າ ພຣະຜູ້ມີພຣະພາກເຈົ້າ ໆລໆ ຕະຫຼອດ ໒ ຄືນ ໒ ມື້ ໆລໆ ຕະຫຼອດ ໓ ຄືນ ໓ ມື້ ໆລໆ ຕະຫຼອດ ໔ ຄືນ ໔ ມື້ ໆລໆ ຕະຫຼອດ ໕ ຄືນ ໕ ມື້ ໆລໆ ຕະຫຼອດ ໖ ຄືນ ໖ ມື້ ໆລໆ

ແມ່ນຖ້າ ພຣະຜູ້ມີພຣະພາກເຈົ້າ ຈະເພິ່ງຕັດຖາມຄວາມຂໍ້ນັ້ນກັບຂ້ານ້ອຍດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ຕະຫຼອດ ໗ ຄືນ ໗ ມື້ ແມ່ນຂ້ານ້ອຍ ກໍເພິ່ງທູນຕອບຄວາມຂໍ້ນັ້ນຖວາຍພຣະຜູ້ມີພຣະພາກໄດ້ດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ຕະຫຼອດ ໗ ຄືນ ໗ ມື້

ພິກຂຸ ກໍຍ້ອນທຳມະທາດອັນສາຣີບຸດແທງຕະຫຼອດໄດ້ດີແລ້ວ ແມ່ນຈະຖາມຄວາມຂໍ້ນັ້ນກັບສາຣີບຸດດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ເບິດມື້ ສາຣີບຸດກໍຄົງຕອບຄວາມຂໍ້ນັ້ນແກ່ເຮົາດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ເບິດມື້

ແມ່ນຖ້າ ເຮົາຈະຖາມຄວາມຂໍ້ນັ້ນກັບສາຣີບຸດດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ເບິດຄືນ ສາຣີບຸດກໍຄົງຕອບຄວາມຂໍ້ນັ້ນ ເບິດຄືນ ໆລໆ

ແມ່ນຖ້າ ເຮົາຈະຖາມຄວາມຂໍ້ນັ້ນກັບສາຣີບຸດ ເບິດມື້ເບິດຄືນ ຯລຯ ສາຣີບຸດກໍຄົງຕອບຄວາມຂໍ້ນັ້ນແກ່ເຮົາໄດ້ເບິດມື້ເບິດຄືນ ຯລຯ

ແມ່ນຖ້າເຮົາຈະຖາມຄວາມຂໍ້ນັ້ນກັບສາຣີບຸດ ຕະຫຼອດ ໒ ຄືນ ໒ ມື້ ຯລຯ ສາຣີບຸດກໍຄົງຕອບຄວາມຂໍ້ນັ້ນແກ່ເຮົາໄດ້ ຕະຫຼອດ ໒ ຄືນ ໒ ມື້ ຯລຯ

ແມ່ນຖ້າ ເຮົາຈະຖາມຄວາມຂໍ້ນັ້ນກັບສາຣີບຸດຕະຫຼອດ ໓ ຄືນ ໓ ມື້ ຯລຯ ສາຣີບຸດກໍຄົງຕອບຄວາມຂໍ້ນັ້ນແກ່ເຮົາໄດ້ຕະຫຼອດ ໓ ຄືນ ໓ ມື້ ຯລຯ

ແມ່ນຖ້າ ເຮົາຈະຖາມຄວາມຂໍ້ນັ້ນກັບສາຣີບຸດ ຕະຫຼອດ ໔ ຄືນ ໔ ມື້ ຯລຯ ສາຣີບຸດກໍຄົງຕອບຄວາມຂໍ້ນັ້ນແກ່ເຮົາໄດ້ ຕະຫຼອດ ໔ ຄືນ ໔ ມື້ ຯລຯ

ແມ່ນຖ້າ ເຮົາຈະຖາມຄວາມຂໍ້ນັ້ນກັບສາຣີບຸດ ຕະຫຼອດ ໕ ຄືນ ໕ ມື້ ຯລຯ ສາຣີບຸດກໍຄົງຕອບຄວາມຂໍ້ນັ້ນແກ່ເຮົາໄດ້ ຕະຫຼອດ ໕ ຄືນ ໕ ມື້ ຯລຯ

ແມ່ນຖ້າ ເຮົາຈະຖາມຄວາມຂໍ້ນັ້ນກັບສາຣີບຸດ ຕະຫຼອດ ໖ ຄືນ ໖ ມື້ ຯລຯ ສາຣີບຸດກໍຄົງຕອບຄວາມຂໍ້ນັ້ນແກ່ເຮົາໄດ້ ຕະຫຼອດ ໖ ຄືນ ໖ ມື້ ຯລຯ

ແມ່ນຖ້າເຮົາຈະຖາມຄວາມຂໍ້ນັ້ນກັບສາຣີບຸດດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ຕະຫຼອດ ໗ ຄືນ ໗ ມື້ ສາຣີບຸດກໍຄົງຕອບຄວາມຂໍ້ນັ້ນ ແກ່ເຮົາໄດ້ດ້ວຍບົດອື່ນ ໆ ດ້ວຍປະຣິຍາຍອື່ນ ໆ ຕະຫຼອດ ໗ ຄືນ ໗ ມື້

**ກະລາຣະສູດທີ ໒ ຈົບ**

# ໓. ຍານະວັດຖຸສູດ

## ວ່າດ້ວຍຍານະວັດຖຸ

[໓໓] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງຍານະວັດຖຸ ໔໔ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍ ຈົ່ງຟັງຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກຈຶ່ງໄດ້ຕັດເລື້ອງນີ້ ວ່າ

ຍານະວັດຖຸ ໔໔ ອັນໃດແດ່ ຄື

໑. ຄວາມຮູ້ໃນຊະຣາແລະມໍລະນະ
໒. ຄວາມຮູ້ໃນຄວາມເກີດແຫ່ງຊະຣາແລະມໍລະນະ
໓. ຄວາມຮູ້ໃນຄວາມດັບແຫ່ງຊະຣາແລະມໍລະນະ
໔. ຄວາມຮູ້ໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ
໕. ຄວາມຮູ້ໃນຊາດ
໖. ຄວາມຮູ້ໃນຄວາມເກີດແຫ່ງຊາດ
໗. ຄວາມຮູ້ໃນຄວາມດັບແຫ່ງຊາດ
໘. ຄວາມຮູ້ໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊາດ
໙. ຄວາມຮູ້ໃນພົບ
໑໐. ຄວາມຮູ້ໃນຄວາມເກີດແຫ່ງພົບ
໑໑. ຄວາມຮູ້ໃນຄວາມດັບແຫ່ງພົບ
໑໒. ຄວາມຮູ້ໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງພົບ
໑໓. ຄວາມຮູ້ໃນອຸປາທານ
໑໔. ຄວາມຮູ້ໃນຄວາມເກີດແຫ່ງອຸປາທານ
໑໕. ຄວາມຮູ້ໃນຄວາມດັບແຫ່ງອຸປາທານ
໑໖. ຄວາມຮູ້ໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງອຸປາທານ
໑໗. ຄວາມຮູ້ໃນຕັນຫາ
໑໘. ຄວາມຮູ້ໃນຄວາມເກີດແຫ່ງຕັນຫາ
໑໙. ຄວາມຮູ້ໃນຄວາມດັບແຫ່ງຕັນຫາ
໒໐. ຄວາມຮູ້ໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຕັນຫາ
໒໑. ຄວາມຮູ້ໃນເວທະນາ
໒໒. ຄວາມຮູ້ໃນຄວາມເກີດແຫ່ງເວທະນາ
໒໓. ຄວາມຮູ້ໃນຄວາມດັບແຫ່ງເວທະນາ
໒໔. ຄວາມຮູ້ໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ
໒໕. ຄວາມຮູ້ໃນຜັດສະ ຯລຯ (໒໖-໒໘)
໒໙. ຄວາມຮູ້ໃນສະລາຍະຕະນະ ຯລຯ (໓໐-໓໒)
໓໓. ຄວາມຮູ້ໃນນາມຮູບ ຯລຯ (໓໔-໓໖)
໓໗. ຄວາມຮູ້ໃນວິນຍານ ຯລຯ (໓໘-໔໐)
໔໑. ຄວາມຮູ້ໃນສັງຂານທັງຫຼາຍ
໔໒. ຄວາມຮູ້ໃນຄວາມເກີດແຫ່ງສັງຂານ
໔໓. ຄວາມຮູ້ໃນຄວາມດັບແຫ່ງສັງຂານ

໔໔. ຄວາມຮູ້ໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ

ເຫຼົ່ານີ້ຮຽກວ່າ ຍານະວັດຖຸ ໔໔

ຊະຣາແລະມໍລະນະ ເປັນແນວໃດ?

ຄື ຄວາມແກ່ ຄວາມຊຸດໂຊມ ຄວາມມີແຂ້ວຫຼ່ອນ ຄວາມມີຜົມຫງອກ ຄວາມມີໜັງຫ່ຽວຍານ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊະຣາ

ຄວາມຈຸຕິ ຄວາມເຄື່ອນໄປ ຄວາມທຳລາຍໄປ ຄວາມຫາຍໄປ ຄວາມຕາຍກ່າວຄືຄວາມຕາຍ ການທຳກາລະ ຄວາມແຕກແຫ່ງຂັນ ຄວາມປະຖິ້ມຮ່າງກາຍ ຄວາມຂາດແຫ່ງຊີວິຕິນຊີຂອງເຫຼົ່າສັດນັ້ນ ໆ ຈາກໝູ່ສັດນັ້ນ ໆ ນີ້ຮຽກວ່າ ມໍລະນະ

ດັ່ງພັນລະນາມານີ້ ນີ້ຮຽກວ່າ ຊະຣາແລະມໍລະນະ

ຍ້ອນຊາດເກີດ ຊະຣາແລະມໍລະນະຈຶ່ງເກີດ ຍ້ອນຊາດດັບ ຊະຣາແລະມໍລະນະຈຶ່ງດັບ

ອະຣິຍະມັກມີອົງ ໘ ນີ້ ຄື

໑. ສຳມາທິດຖິ ໆລໆ ໘. ສຳມາສະມາທິ

ຊື່ວ່າປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ

ພິກຂຸທັງຫຼາຍ ເມື່ອໃດ ອະຣິຍະສາວົກຮູ້ແຈ້ງຊະຣາແລະມໍລະນະ ແນວນີ້ ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະ ແນວນີ້ ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະ ແນວນີ້ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະແນວນີ້ ນີ້ຊື່ວ່າ ທຳມະຍານຂອງອະຣິຍະສາວົກນັ້ນ ເມື່ອນັ້ນ

ອະຣິຍະສາວົກນັ້ນ ພິຈາລະນາໄນໃນອະດີດ ແລະ ອະນາຄົດດ້ວຍທຳນີ້ ເຊິ່ງຕົນເຫັນແລ້ວຮູ້ແລ້ວ ບໍ່ປະກອບດ້ວຍການເວລາ ອັນຕົນໄດ້ບັນລຸແລ້ວ ອັນຕົນຢັ່ງຮູ້ແລ້ວ

ສະມະນະ ຫຼື ພາມໃນອະດີດເຫຼົ່າໃດເຫຼົ່າໜຶ່ງ ກໍໄດ້ຮູ້ຊະຣາແລະມໍລະນະ ໄດ້ຮູ້ຄວາມເກີດແຫ່ງຊະຣາແລະມໍລະນະ ໄດ້ຮູ້ຄວາມດັບແຫ່ງຊະຣາແລະມໍລະນະ ໄດ້ຮູ້ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ ຄືກັບທີ່ເຮົາຮູ້ໃນບັດນີ້ຄືກັນທັງໝົດ

ສະມະນະ ຫຼື ພາມໃນອະນາຄົດເຫຼົ່າໃດເຫຼົ່າໜຶ່ງ ກໍຈັກຮູ້ຊະຣາແລະມໍລະນະ ຈັກຮູ້ຄວາມເກີດແຫ່ງຊະຣາແລະມໍລະນະ ຈັກຮູ້ຄວາມດັບຊະຣາແລະມໍລະນະ ຈັກຮູ້ປະຕິປະທາທີ່ໃຫ້ເຖິງ ຄວາມດັບແຫ່ງຊະຣາແລະມໍລະນະ ຄືກັບທີ່ເຮົາຮູ້ໃນບັດນີ້ຄືກັນທັງໝົດ ນີ້ຊື່ວ່າ ອັນວະຍະຍານຂອງອະຣິຍະສາວົກນັ້ນ

ຍານ ໒ ປະການນີ້ ຄື (໑) ທຳມະຍານ (໒) ອັນວະຍະຍານຂອງອະຣິຍະສາວົກ ເປັນທຳມະຊາດບໍລິສຸດຜຸດຜ່ອງ ອະຣິຍະສາວົກນີ້ເຮົາຮຽກວ່າ ເປັນຜູ້ເຖິງພ້ອມດ້ວຍທິດຖິແດ່ ຜູ້ເຖິງພ້ອມດ້ວຍທັດສະນະແດ່ ຜູ້ເຖິງສັດທຳນີ້ແດ່ ເຫັນສັດທຳນີ້ແດ່ ປະກອບດ້ວຍຍານອັນເປັນເສຂະແດ່ ປະກອບດ້ວຍວິດຊາອັນເປັນເສຂະແດ່ ບັນລຸກະແສແຫ່ງທຳແດ່ ເປັນພຣະອະຣິຍະຜູ້ມີປັນຍາເພີກຖອນກິເລດແດ່ ດຳລົງຢູ່ໃກ້ປະຕູອະມະຕະນິບພານແດ່

ຊາດເປັນແນວໃດ? ຯລຯ ພົບເປັນແນວໃດ? ຯລຯ ອຸປາທານເປັນແນວໃດ? ຯລຯ ຕັນຫາເປັນແນວໃດ? ຯລຯ ເວທະນາເປັນແນວໃດ? ຯລຯ ຜັດສະເປັນແນວໃດ? ຯລຯ ສະລາຍະຕະນະເປັນແນວໃດ? ຯລຯ ນາມຮູບເປັນແນວໃດ? ຯລຯ ວິນຍານເປັນແນວໃດ? ຯລຯ

ສັງຂານທັງຫຼາຍ ມີທີ່ໃດ?

ສັງຂານມີ ໓ ປະການນີ້ ຄື

໑. ກາຍສັງຂານ
໒. ວະຈີສັງຂານ
໓. ຈິດຕະສັງຂານ

ນີ້ຮຽກວ່າສັງຂານທັງຫຼາຍ

ຍ້ອນອະວິດຊາເກີດ ສັງຂານຈຶ່ງເກີດ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ

ອະຣິຍະມັກມີອົງ ໘ ນີ້ທີ່ນັ້ນ ຄື

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ຊື່ວ່າປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ

ເມື່ອໃດອະຣິຍະສາວົກຮູ້ແຈ້ງສັງຂານທັງຫຼາຍແນວນີ້ ຮູ້ແຈ້ງຄວາມເກີດແຫ່ງສັງຂານແນວນີ້ ຮູ້ແຈ້ງຄວາມດັບແຫ່ງສັງຂານແນວນີ້ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານແນວນີ້ ນີ້ຊື່ວ່າ ທຳມະຍານຂອງອະຣິຍະສາວົກນັ້ນ ເມື່ອນັ້ນ ອະຣິຍະສາວົກນັ້ນ ພິຈາລະນາໄນ

ໃນອະດີດແລະອະນາຄົດດ້ວຍທຳນີ້ ເຊິ່ງຕົນເຫັນແລ້ວ ຮູ້ແລ້ວ ບໍ່ປະກອບດ້ວຍການເວລາ ອັນຕົນໄດ້ບັນລຸແລ້ວ ອັນຕົນຢັ່ງຮູ້ແລ້ວ

ສະມະນະພາມໃນອະດີດເຫຼົ່າໃດເຫຼົ່າໜຶ່ງ ກໍໄດ້ຮູ້ສັງຂານທັງຫຼາຍ ໄດ້ຮູ້ຄວາມເກີດແຫ່ງສັງຂານ ໄດ້ຮູ້ຄວາມດັບແຫ່ງສັງຂານ ໄດ້ຮູ້ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານຄືກັບທີ່ເຮົາຮູ້ໃນບັດນີ້ຄືກັນທັງໝົດ

ສະມະນະພາມໃນອະນາຄົດເຫຼົ່າໃດເຫຼົ່າໜຶ່ງ ກໍຈັກຮູ້ສັງຂານທັງຫຼາຍ ຈັກຮູ້ຄວາມເກີດແຫ່ງສັງຂານ ຈັກຮູ້ຄວາມດັບສັງຂານ ຈັກຮູ້ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ຄືກັບທີ່ເຮົາຮູ້ໃນບັດນີ້ຄືກັນທັງໝົດ ນີ້ຊື່ວ່າ ອັນວະຍະຍານຂອງອະຣິຍະສາວົກນັ້ນ

ພິກຂຸທັງຫຼາຍ ຍານ ໒ ປະການນີ້ ຄື (໑) ທຳມະຍານ (໒) ອັນວະຍະຍານ ຂອງອະຣິຍະສາວົກ ເປັນທຳມະຊາດບໍລິສຸດຜຸດຜ່ອງ ອະຣິຍະສາວົກນີ້ເຮົາຮຽກວ່າ ເປັນຜູ້ເຖິງພ້ອມດ້ວຍທິດຖິແດ່ ຜູ້ເຖິງພ້ອມດ້ວຍທັສສະນະແດ່ ຜູ້ເຖິງສັດທຳນີ້ແດ່ ເຫັນສັດທຳນີ້ແດ່ ປະກອບດ້ວຍຍານອັນເປັນເສຂະແດ່ ປະກອບດ້ວຍວິດຊາອັນເປັນເສຂະແດ່ ບັນລຸກະແສແຫ່ງທຳແດ່ ເປັນພຣະອະຣິຍະຜູ້ມີປັນຍາເພີກຖອນກິເລດແດ່ ດຳລົງຢູ່ໃກ້ປະຕູອະມະຕະນິບພານແດ່

**ຍານະວັດຖຸສູດທີ ໓ ຈົບ**

## ໔. ທຸຕິຍະຍານະວັດຖຸສູດ

### ວ່າດ້ວຍຍານະວັດຖຸ ສູດທີ ໔

[໓໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງຍານະວັດຖຸ ໗໗ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍ ຈົ່ງຟັງຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ ວ່າ

ຍານະວັດຖຸ ໗໗ ອັນໃດແດ່ ຄື

໑. ຄວາມຮູ້ວ່າ ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ
໒. ຄວາມຮູ້ວ່າ ເມື່ອຊາດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ
໓. ແມ່ນໃນອະດີດ ຄວາມຮູ້ວ່າ ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ
໔. ຄວາມຮູ້ວ່າ ເມື່ອຊາດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ

໕. ແມ່ນໃນອະນາຄົດຄວາມຮູ້ວ່າ ຍ້ອນຊາດເປັນປັດໄຈຊະຣາແລະມໍລະນະຈຶ່ງມີ
໖. ຄວາມຮູ້ວ່າ ເມື່ອຊາດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ
໗. ຄວາມຮູ້ວ່າ ທຳມະຖິຕິຍານຂອງຊາດນັ້ນ ມີຄວາມສິ້ນໄປ ມີຄວາມເສື່ອມໄປ ມີຄວາມຄາຍອອກ ມີຄວາມດັບໄປເປັນທຳມະດາ
໘. ຄວາມຮູ້ວ່າ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ໗ລ໗ (໙-໑໔)
໑໕. ຄວາມຮູ້ວ່າ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ໗ລ໗ (໑໖-໒໑)
໒໒. ຄວາມຮູ້ວ່າ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ໗ລ໗ (໒໓-໒໘)
໒໙. ຄວາມຮູ້ວ່າ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ ໗ລ໗ (໓໐-໓໕)
໓໖. ຄວາມຮູ້ວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ໗ລ໗ (໓໗-໔໒)
໔໓. ຄວາມຮູ້ວ່າ ຍ້ອນສະລາຍະຕະນະເປັນປັດໄຈຜັດສະຈຶ່ງມີ ໗ລ໗ (໔໔-໔໙)
໕໐. ຄວາມຮູ້ວ່າ ຍ້ອນນາມຮູບເປັນປັດໄຈສະລາຍະຕະນະຈຶ່ງມີ ໗ລ໗ (໕໑-໕໖)
໕໗. ຄວາມຮູ້ວ່າ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ ໗ລ໗ (໕໘-໖໓)
໖໔. ຄວາມຮູ້ວ່າ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ໗ລ໗ (໖໕-໗໐)
໗໑. ຄວາມຮູ້ວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ
໗໒. ຄວາມຮູ້ວ່າ ເມື່ອອະວິດຊາບໍ່ມີ ສັງຂານຈຶ່ງບໍ່ມີ
໗໓. ແມ່ນໃນອະດີດ ຄວາມຮູ້ວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ
໗໔. ຄວາມຮູ້ວ່າ ເມື່ອອະວິດຊາບໍ່ມີ ສັງຂານຈຶ່ງບໍ່ມີ
໗໕. ແມ່ນໃນອະນາຄົດ ຄວາມຮູ້ວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ
໗໖. ຄວາມຮູ້ວ່າ ເມື່ອອະວິດຊາບໍ່ມີ ສັງຂານຈຶ່ງບໍ່ມີ
໗໗. ຄວາມຮູ້ວ່າ ທຳມະຖິຕິຍານຂອງອະວິດຊານັ້ນ ມີຄວາມສິ້ນໄປ ມີຄວາມເສື່ອມໄປ ມີຄວາມຄາຍອອກ ມີຄວາມດັບໄປເປັນທຳມະດາ

ພິກຂຸທັງຫຼາຍ ເຫຼົ່ານີ້ຮຽກວ່າ ຍານະວັດຖຸ ໗໗

**ທຸຕິຍະຍານະວັດຖຸສູດທີ ໔ ຈົບ**

# ໕. ອະວິດຊາປັດຈະຍະສູດ

## ວ່າດ້ວຍອະວິດຊາເປັນປັດໄຈ

[໓໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໗ລ໗ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ຊະຣາແລະມໍລະນະເປັນແນວໃດ? ຊະຣາແລະມໍລະນະນີ້ເປັນຂອງໃຜ?

ພິກຂຸ ບັນຫານີ້ບໍ່ສົມຄວນຖາມແນວນັ້ນ ຜູ້ໃດເພິ່ງກ່າວວ່າ ຊະຣາແລະມໍລະນະເປັນແນວໃດ? ຊະຣາແລະມໍລະນະນີ້ເປັນຂອງໃຜ? ຫຼື ເພິ່ງກ່າວວ່າ ຊະຣາແລະມໍລະນະເປັນແນວອື່ນ ຊະຣາແລະມໍລະນະນີ້ເປັນຂອງຜູ້ອື່ນ ຄໍາທັງສອງນັ້ນ ມີຄວາມໝາຍແນວເດີຍວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ ເມື່ອມີທິດຖິວ່າ ຊີວະກັບສະຣີຣະເປັນແນວເດີຍວກັນ ການຢູ່ປະພຶດພົມມະຈັນຍ່ອມບໍ່ມີ ຫຼື ວ່າເມື່ອມີທິດຖິວ່າ ຊີວະກັບສະຣີຣະເປັນຄົນລະແນວກັນ ການຢູ່ປະພຶດພົມມະຈັນຍ່ອມບໍ່ມີ ຕະຖາຄົດບໍ່ເຂົ້າໄປໃກ້ບ່ອນສຸດ ໒ ແນວນີ້ ຍ່ອມສະແດງທໍາໂດຍສາຍກາງວ່າ ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ

ຊາດເປັນແນວໃດ? ແລະຊາດນີ້ເປັນຂອງໃຜ?

ບັນຫານີ້ບໍ່ສົມຄວນຖາມແນວນັ້ນ ຜູ້ໃດເພິ່ງກ່າວວ່າ ຊາດເປັນແນວໃດ? ແລະຊາດນີ້ເປັນຂອງໃຜ? ຫຼື ເພິ່ງກ່າວວ່າ ຊາດເປັນແນວອື່ນ ແລະຊາດນີ້ເປັນຂອງຜູ້ອື່ນ ຄໍາທັງສອງນັ້ນມີຄວາມໝາຍຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ ເມື່ອມີທິດຖິວ່າ ຊີວະກັບສະຣີຣະເປັນແນວດຽວກັນ ການຢູ່ປະພຶດພົມມະຈັນຍ່ອມບໍ່ມີ ຫຼື ວ່າ ເມື່ອມີທິດຖິວ່າ ຊີວະກັບສະຣີຣະເປັນຄົນລະແນວກັນ ການຢູ່ປະພຶດພົມມະຈັນຍ່ອມບໍ່ມີ ຕະຖາຄົດບໍ່ເຂົ້າໄປໃກ້ບ່ອນສຸດ ໒ ຢ່າງນີ້ ຍ່ອມສະແດງທໍາໂດຍສາຍກາງວ່າ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ

ພົບເປັນແນວໃດ? ແລະ ພົບນີ້ເປັນຂອງໃຜ?

ບັນຫານີ້ບໍ່ສົມຄວນຖາມແນວນັ້ນ ຜູ້ໃດເພິ່ງກ່າວວ່າ ພົບເປັນແນວໃດ? ແລະ ພົບນີ້ເປັນຂອງໃຜ? ຫຼື ເພິ່ງກ່າວວ່າ ພົບເປັນແນວອື່ນ ແລະ ພົບນີ້ເປັນຂອງຜູ້ອື່ນ ຄໍາທັງສອງນັ້ນມີຄວາມໝາຍແນວດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ ເມື່ອມີທິດຖິວ່າ ຊີວະກັບສະຣີຣະເປັນແນວດຽງກັນ ການຢູ່ປະພຶດພົມມະຈັນຍ່ອມບໍ່ມີ ຫຼື ວ່າ ເມື່ອມີທິດຖິວ່າ ຊີວະກັບສະຣີຣະເປັນຄົນລະແນວກັນ ການຢູ່ປະພຶດພົມມະຈັນຍ່ອມບໍ່ມີ ຕະຖາຄົດບໍ່ເຂົ້າໄປໃກ້ບ່ອນສຸດ ໒ ແນວນີ້ຍ່ອມສະແດງທໍາໂດຍສາຍກາງວ່າ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ຯລຯ ຍ້ອນຕັນຫາເປັນປັດ

ໃຈ ອຸປາທານຈຶ່ງມີ ຯລຯ ຍ້ອນເວທະນາ ເປັນປັດໃຈ ຕັນຫາຈຶ່ງມີ ຯລຯ ຍ້ອນຜັດສະເປັນປັດໃຈ ເວທະນາຈຶ່ງມີ ຯລຯ ຍ້ອນສະລາຍະຕະນະເປັນປັດໃຈ ຜັດສະຈຶ່ງມີ ຯລຯ ຍ້ອນນາມຮູບເປັນປັດໃຈ ສະລາຍະຕະນະຈຶ່ງມີ ຯລຯ ຍ້ອນວິນຍານເປັນປັດໃຈ ນາມຮູບຈຶ່ງມີ ຯລຯ ຍ້ອນສັງຂານເປັນປັດໃຈ ວິນຍານຈຶ່ງມີ

ສັງຂານທັງຫຼາຍເປັນແນວໃດ? ແລະສັງຂານເຫຼົ່ານີ້ເປັນຂອງໃຜ?

ບັນຫານີ້ບໍ່ສົມຄວນຖາມແນວນັ້ນ ຜູ້ໃດເພິ່ງກ່າວວ່າ ສັງຂານທັງຫຼາຍເປັນແນວໃດ? ແລະສັງຂານເຫຼົ່ານີ້ເປັນຂອງໃຜ? ຫຼື ເພິ່ງກ່າວວ່າ ສັງຂານທັງຫຼາຍເປັນແນວອື່ນ ແລະສັງຂານເຫຼົ່ານີ້ເປັນຂອງຜູ້ອື່ນ ຄຳທັງສອງນັ້ນ ມີຄວາມໝາຍແນວດຽວກັນ ຕ່າງກັນແຕ່ພະຍັນຊະນະທີ່ນັ້ນ ເມື່ອມີທິດຖິວ່າ ຊີວະກັບສະຣີຣະເປັນແນວດຽວກັນ ການຢູ່ປະພຶດພົມມະຈັນຍ່ອມບໍ່ມີ ຫຼືວ່າ ເມື່ອມີທິດຖິວ່າ ຊີວະກັບສະຣີຣະເປັນຄົນລະແນວກັນ ການຢູ່ປະພຶດພົມມະຈັນຍ່ອມບໍ່ມີ ຕະຖາຄົດບໍ່ເຂົ້າໄປໃກ້ບ່ອນສຸດ ໒ ແນວນີ້ ຍ່ອມສະແດງທຳ ໂດຍສາຍກາງວ່າ ຍ້ອນອະວິດຊາເປັນປັດໃຈ ສັງຂານທັງຫຼາຍຈຶ່ງມີ

ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ທິດຖິແນວໃດແນວໜຶ່ງ ທີ່ເປັນຂ້າເສິກ ອັນບຸກຄົນເສບຜິດ ທີ່ດີ້ນຮົນໄປວ່າ ຊະຣາແລະມໍລະນະເປັນແນວໃດ? ຊະຣາແລະມໍລະນະນີ້ເປັນຂອງໃຜ ຫຼື ວ່າ ຊະຣາແລະມໍລະນະເປັນແນວອື່ນ ຊະຣາແລະມໍລະນະນີ້ເປັນຂອງຜູ້ອື່ນວ່າຊີວະກັບສະຣີຣະເປັນແນວດຽວກັນ ຊີວະກັບສະຣີຣະເປັນຄົນລະແນວກັນ ທິດຖິເຫຼົ່ານັ້ນທັງໝົດອັນອະຣິຍະສາວົກນັ້ນລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ທິດຖິແນວໃດແນວໜຶ່ງ ທີ່ເປັນຂ້າເສິກ ອັນບຸກຄົນເສບຜິດ ທີ່ດີ້ນຮົນໄປວ່າ ຊາດເປັນແນວໃດ? ແລະຊາດນີ້ເປັນຂອງໃຜ? ຫຼືວ່າ ຊາຕິເປັນແນວອື່ນ ແລະ ຊາດນີ້ເປັນຂອງຜູ້ອື່ນວ່າ ຊີວະກັບສະຣີຣະເປັນແນວດຽວກັນ ຫຼືວ່າ ຊີວະກັບສະຣີຣະເປັນຄົນລະແນວກັນ ທິດຖິເຫຼົ່ານັ້ນທັງໝົດ ອັນອະຣິຍະສາວົກນັ້ນ ລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້

ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ທິດຖິແນວໃດແນວໜຶ່ງ ທີ່ເປັນຂ້າເສິກ ອັນບຸກຄົນເສບຜິດ ທີ່ດີ້ນຮົນໄປວ່າ ພົບເປັນແນວໃດ? ຯລຯ ອຸປາທານເປັນແນວໃດ? ຯລຯ ຕັນຫາເປັນແນວໃດ? ຯລຯ ເວທະນາເປັນແນວໃດ? ຯລຯ ຜັດສະເປັນແນວໃດ? ຯລຯ ສະລາຍະຕະນະເປັນ ແນວໃດ ຯລຯ ນາມຮູບເປັນແນວໃດ? ຯລຯ ວິນຍານເປັນແນວໃດ? ຯລຯ

ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ທິດຖິແນວໃດແນວໜຶ່ງ ທີ່ເປັນຂ້າເສິກ ອັນບຸກຄົນເສບຜິດ ທີ່ດີ້ນຮົນໄປວ່າ ສັງຂານທັງຫຼາຍເປັນແນວໃດ? ແລະສັງຂານເຫຼົ່ານີ້ເປັນຂອງໃຜ ຫຼືວ່າ ສັງຂານທັງຫຼາຍເປັນແນວອື່ນ ແລະ ສັງຂານເຫຼົ່ານີ້ເປັນຂອງຜູ້ອື່ນ ຊີວະ ກັບສະຣີຣະເປັນຢ່າງດຽວກັນ ຫຼືວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ທິດຖິເຫຼົ່ານັ້ນ ທັງໝົດອັນອະຣິຍະສາວົກນັ້ນລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້

**ອະວິດຊາປັດຈະຍະສູດທີ ໕ ຈົບ**

# ໖. ທຸຕິຍະອະວິດຊາປັດຈະຍະສູດ

## ວ່າດ້ວຍອະວິດຊາເປັນປັດໄຈ ສູດທີ ໘

[໓໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ຜູ້ໃດເພິ່ງກ່າວວ່າ ຊະຣາແລະມໍລະນະເປັນແນວໃດ? ຊະຣາແລະມໍລະນະນີ້ເປັນຂອງໃຜ ຫຼືເພິ່ງກ່າວວ່າ ຊະຣາແລະມໍລະນະເປັນແນວອື່ນ ຊະຣາແລະມໍລະນະນີ້ເປັນຂອງຜູ້ອື່ນ ຄຳທັງສອງນັ້ນມີຄວາມໝາຍແນວດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ ເມື່ອມີທິດຖິວ່າ ຊີວະກັບສະຣີຣະເປັນແນວດຽວກັນ ການຢູ່ປະພຶດພົມມະຈັນຍ່ອມບໍ່ມີ ຫຼື ວ່າ ເມື່ອມີທິດຖິວ່າ ຊີວະກັບສະຣີຣະເປັນຄົນລະແນວກັນ ການຢູ່ປະພຶດພົມມະຈັນຍ່ອມບໍ່ມີ ຕະຖາຄົດບໍ່ເຂົ້າໄປໃກ້ບ່ອນສຸດ ໒ ແນວນີ້ ຍ່ອມສະແດງທຳໂດຍສາຍກາງວ່າ ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ

ຜູ້ໃດເພິ່ງກ່າວວ່າ ຊາດເປັນແນວໃດ? ຯລຯ ພົບເປັນແນວໃດ? ຯລຯ ອຸປາທານເປັນແນວໃດ? ຯລຯ ຕັນຫາເປັນແນວໃດ? ຯລຯ ເວທະນາເປັນແນວໃດ? ຯລຯ ຜັດສະເປັນແນວໃດ? ຯລຯ ສະລາຍະຕະນະເປັນແນວໃດ? ຯລຯ ນາມຮູບເປັນແນວໃດ? ຯລຯ ວິນຍານເປັນແນວໃດ? ຯລຯ

ຜູ້ໃດເພິ່ງກ່າວວ່າ ສັງຂານທັງຫຼາຍເປັນແນວໃດ ແລະສັງຂານເຫຼົ່ານີ້ເປັນຂອງໃຜ ຫຼືເພິ່ງກ່າວວ່າ ສັງຂານທັງຫຼາຍເປັນແນວອື່ນ ແລະ ສັງຂານເຫຼົ່ານີ້ເປັນຂອງຜູ້ອື່ນ ຄຳທັງສອງນັ້ນມີຄວາມໝາຍແນວດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ ເມື່ອມີທິດຖິວ່າ ຊີວະກັບສະຣີຣະເປັນແນວດຽວກັນ ການຢູ່ປະພຶດພົມມະຈັນຍ່ອມບໍ່ມີ ຫຼື ວ່າ ເມື່ອມີ ທິດຖິວ່າ ຊີວະກັບສະຣີຣະເປັນ

ຄົນລະແນວກັນ ການຢູ່ປະພຶດພົມມະຈັນຍ່ອມບໍ່ມີ ຕະຖາຄົດບໍ່ເຂົ້າໄປໃກ້ບ່ອນສຸດ ໒ ແນວນີ້ ຍ່ອມສະແດງທຳໂດຍສາຍກາງວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ

ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ທິດຖິແນວໃດແນວໜຶ່ງ ທີ່ເປັນຂ້າເສິກ ອັນບຸກຄົນເສບຜິດ ທີ່ດີ້ນຣົນໄປວ່າ ຊະຣາແລະມໍລະນະເປັນແນວໃດ ຊະຣາແລະມໍລະນະນີ້ເປັນຂອງໃຜ ຫຼື ວ່າ ຊະຣາແລະມໍລະນະເປັນແນວອື່ນ ຊະຣາແລະມໍລະນະນີ້ເປັນຂອງຜູ້ອື່ນ ຊີວະກັບສະຣີຣະເປັນແນວດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະແນວກັນ ທິດຖິເຫຼົ່ານັ້ນ ທັງໝົດອັນອະຣິຍະສາວົກນັ້ນ ລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກ ຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ທິດຖິແນວໃດແນວໜຶ່ງ ທີ່ເປັນຂ້າເສິກ ອັນບຸກຄົນເສບຜິດ ທີ່ດີ້ນຣົນໄປວ່າ ຊາດເປັນແນວໃດ? ຯລຯ ພົບເປັນແນວໃດ? ຯລຯ ອຸປາທານເປັນແນວໃດ? ຯລຯ ຕັນຫາເປັນແນວໃດ? ຯລຯ ເວທະນາເປັນແນວໃດ? ຯລຯ ຜັດສະເປັນແນວໃດ? ຯລຯ ສະລາຍະຕະນະເປັນແນວໃດ? ຯລຯ ນາມຮູບເປັນແນວໃດ? ຯລຯ ວິນຍານເປັນແນວໃດ? ຯລຯ ສັງຂານ ທັງຫຼາຍເປັນແນວໃດ? ແລະສັງຂານເຫຼົ່ານີ້ເປັນຂອງໃຜ ຫຼືວ່າ ສັງຂານທັງຫຼາຍເປັນແນວອື່ນ ແລະສັງຂານເຫຼົ່ານີ້ເປັນຂອງຜູ້ອື່ນ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ທິດຖິເຫຼົ່ານັ້ນທັງໝົດອັນອະຣິຍະສາວົກນັ້ນລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

**ທຸຕິຍະອະວິດຊາປັດຈະຍະສູດທີ ໖ ຈົບ**

# ໗. ນະຕຸມະຫະສູດ

## ວ່າດ້ວຍກາຍບໍ່ແມ່ນຂອງທ່ານທັງຫຼາຍ

[໖໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ກາຍນີ້ບໍ່ແມ່ນຂອງທ່ານທັງຫຼາຍ ທັງບໍ່ແມ່ນຂອງຜູ້ອື່ນ ກາຍນີ້ທ່ານທັງຫຼາຍ ເພິ່ງເຫັນວ່າເປັນກຳເກົ່າ ຖືກປັດໄຈປຸງແຕ່ງ ສຳເລັດດ້ວຍເຈຕະນາ ເປັນທີ່ຕັ້ງແຫ່ງເວທະນາ

ອະຣິຍະສາວົກຜູ້ໄດ້ສະດັບ ຍ່ອມມະນະສິການປະຕິດຈະສະມຸບບາດໂດຍແຍບຄາຍໃນກາຍນັ້ນວ່າ ຍ້ອນເຫດນີ້ ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ ຍ້ອນສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ ຍ້ອນສິ່ງນີ້ດັບໄປ ສິ່ງນີ້ຈຶ່ງດັບໄປ ຄື ຍ້ອນອະວິດຊາເປັນປັດໄຈ ສັງຂານທັງ

ຫຼາຍຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້ ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

**ນະຕຸມະຫະສູດທີ ໗ ຈົບ**

# ໘. ເຈຕະນາສູດ

## ວ່າດ້ວຍເຈຕະນາ

[໖໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ພິກຂຸຈົງໃຈ ດຳຣິ ແລະ ນຶກຄິດເຖິງສິ່ງໃດ ສິ່ງນັ້ນເປັນອາຣຳມະນະປັດໄຈ ເພື່ອຄວາມຕັ້ງໝັ້ນແຫ່ງວິນຍານ ເມື່ອອາຣຳມະນະປັດໄຈມີ ຄວາມຕັ້ງໝັ້ນແຫ່ງວິນຍານຈຶ່ງມີ ເມື່ອວິນຍານນັ້ນ ຕັ້ງໝັ້ນແລ້ວ ຈະເລີນຂຶ້ນແລ້ວ ຄວາມບັງເກີດແຫ່ງພົບໃໝ່ຕໍ່ໄປຈຶ່ງມີ ເມື່ອຄວາມບັງເກີດແຫ່ງພົບໃໝ່ຕໍ່ໄປມີ ຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງມີຕໍ່ໄປ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ພິກຂຸບໍ່ຈົງໃຈ ບໍ່ດຳຣິ ແຕ່ຍັງນຶກຄິດເຖິງສິ່ງໃດ ສິ່ງນັ້ນເປັນອາຣຳມະນະປັດໄຈ ເພື່ອຄວາມຕັ້ງໝັ້ນແຫ່ງວິນຍານ ເມື່ອອາຣຳມະນະປັດໄຈມີ ຄວາມຕັ້ງໝັ້ນແຫ່ງວິນຍານຈຶ່ງມີ ເມື່ອວິນຍານ ນັ້ນຕັ້ງໝັ້ນແລ້ວ ຈະເລີນຂຶ້ນແລ້ວ ຄວາມບັງເກີດແຫ່ງພົບໃໝ່ຕໍ່ໄປຈຶ່ງມີ ເມື່ອຄວາມບັງເກີດແຫ່ງພົບໃໝ່ຕໍ່ໄປມີ ຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ຈຶ່ງມີຕໍ່ໄປ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ພິກຂຸບໍ່ຈົງໃຈ ບໍ່ດຳຣິ ແລະ ບໍ່ນຶກຄິດເຖິງສິ່ງໃດ ສິ່ງນັ້ນບໍ່ເປັນອາຣຳມະນະປັດໄຈເພື່ອຄວາມຕັ້ງໝັ້ນແຫ່ງວິນຍານ ເມື່ອອາຣຳມະນະປັດໄຈບໍ່ມີ ຄວາມຕັ້ງໝັ້ນແຫ່ງວິນຍານຈຶ່ງບໍ່ມີ ເມື່ອວິນຍານນັ້ນບໍ່ຕັ້ງໝັ້ນແລ້ວ ບໍ່ຈະເລີນຂຶ້ນແລ້ວ ຄວາມບັງເກີດແຫ່ງພົບໃໝ່ຕໍ່ໄປຈຶ່ງບໍ່ມີ ເມື່ອຄວາມບັງເກີດແຫ່ງພົບໃໝ່ຕໍ່ໄປບໍ່ມີ ຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

**ເຈຕະນາສູດທີ ໘ ຈົບ**

# ໙. ທຸຕິຍະເຈຕະນາສູດ

## ວ່າດ້ວຍເຈຕະນາ ສູດທີ ໘

[໓໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ພິກຂຸຈົ່ງໃຈ ດຳຣິ ແລະ ນຶກຄິດເຖິງສິ່ງໃດ ສິ່ງນັ້ນເປັນອາຣົມມະນະປັດໄຈເພື່ອຄວາມຕັ້ງໝັ້ນແຫ່ງວິນຍານ ເມື່ອອາຣົມມະນະປັດໄຈມີ ຄວາມຕັ້ງໝັ້ນແຫ່ງວິນຍານຈຶ່ງມີ ເມື່ອວິນຍານນັ້ນຕັ້ງໝັ້ນແລ້ວ ຈະເລີນຂຶ້ນແລ້ວ ຄວາມຢັ່ງລົງແຫ່ງນາມຮູບຈຶ່ງມີ ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີ ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຯລຯ ຕັນຫາ ຯລຯ ອຸປາທານ ຯລຯ ພົບ ຯລຯ ຊາດ ຯລຯ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງມີ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ພິກຂຸບໍ່ຈົ່ງໃຈ ບໍ່ດຳຣິ ແຕ່ຍັງນຶກຄິດເຖິງສິ່ງໃດ ສິ່ງນັ້ນເປັນອາຣົມມະນະປັດໄຈເພື່ອຄວາມຕັ້ງໝັ້ນແຫ່ງວິນຍານ ເມື່ອອາຣົມມະນະປັດໄຈມີ ຄວາມຕັ້ງໝັ້ນແຫ່ງວິນຍານຈຶ່ງມີ ເມື່ອວິນຍານນັ້ນ ຕັ້ງໝັ້ນແລ້ວ ຈະເລີນຂຶ້ນແລ້ວ ຄວາມຢັ່ງລົງແຫ່ງນາມຮູບຈຶ່ງມີ ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ພິກຂຸທັງຫຼາຍ ພິກຂຸບໍ່ຈົງໃຈ ບໍ່ດຳຣິ ແລະບໍ່ນຶກຄິດເຖິງສິ່ງໃດ ສິ່ງນັ້ນບໍ່ເປັນອາຣົມມະນະປັດໄຈເພື່ອຄວາມຕັ້ງໝັ້ນແຫ່ງວິນຍານ ເມື່ອອາຣົມມະນະປັດໄຈບໍ່ມີ ຄວາມຕັ້ງໝັ້ນແຫ່ງວິນຍານຈຶ່ງບໍ່ມີ ເມື່ອວິນຍານນັ້ນບໍ່ຕັ້ງໝັ້ນແລ້ວ ບໍ່ຈະເລີນຂຶ້ນແລ້ວ ຄວາມຢັ່ງລົງແຫ່ງນາມຮູບຈຶ່ງບໍ່ມີ ຍ້ອນນາມຮູບດັບ ສະລາຍະຕະນະຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

**ທຸຕິຍະເຈຕະນາສູດທີ ໙ ຈົບ**

# ໑໐. ຕະຕິຍະເຈຕະນາສູດ

## ວ່າດ້ວຍເຈຕະນາ ສູດທີ ໓

[໔໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ພິກຂຸຈົງໃຈ ດຳຣິ ແລະ ນຶກຄິດເຖິງສິ່ງໃດ ສິ່ງນັ້ນເປັນອາຣຳມະນະປັດໄຈເພື່ອຄວາມຕັ້ງໝັ້ນແຫ່ງວິນຍານ ເມື່ອອາຣຳມະນະປັດໄຈມີ ຄວາມຕັ້ງໝັ້ນແຫ່ງວິນຍານຈຶ່ງມີ ເມື່ອວິນຍານນັ້ນຕັ້ງໝັ້ນແລ້ວ ຈະເລີນຂຶ້ນແລ້ວ ນະຕິຈຶ່ງມີ ເມື່ອນະຕິມີ ຄະຕິພົບໃນການວຽນມາຈຶ່ງມີ ເມື່ອຄະຕິພົບໃນການວຽນມາມີ ຈຸຕິແລະອຸບັດຈຶ່ງມີ ເມື່ອຈຸຕິແລະອຸບັດມີ ຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງມີ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ພິກຂຸບໍ່ຈົງໃຈ ບໍ່ດຳຣິ ແຕ່ນຶກຄິດເຖິງສິ່ງໃດ ສິ່ງນັ້ນເປັນອາຣຳມະນະປັດໄຈເພື່ອຄວາມຕັ້ງໝັ້ນແຫ່ງວິນຍານ ເມື່ອອາຣຳມະນະປັດໄຈມີ ຄວາມຕັ້ງໝັ້ນແຫ່ງວິນຍານຈຶ່ງມີ ເມື່ອວິນຍານນັ້ນຕັ້ງໝັ້ນແລ້ວ ຈະເລີນຂຶ້ນແລ້ວ ນະຕິຈຶ່ງມີ ເມື່ອນະຕິມີ ຄະຕິພົບໃນການວຽນມາຈຶ່ງມີ ເມື່ອຄະຕິພົບໃນການວຽນມາມີ ຈຸຕິແລະອຸບັດຈຶ່ງມີ ເມື່ອຈຸຕິແລະອຸບັດມີ ຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງມີ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ພິກຂຸທັງຫຼາຍ ພິກຂຸບໍ່ຈົ່ງໃຈ ບໍ່ດຳຣິ ແລະ ບໍ່ນຶກຄິດເຖິງສິ່ງໃດ ສິ່ງນັ້ນບໍ່ເປັນອາຣຳມະນະປັດໄຈເພື່ອຄວາມຕັ້ງໝັ້ນແຫ່ງວິນຍານ ເມື່ອອາຣຳມະນະປັດໄຈບໍ່ມີ ຄວາມຕັ້ງໝັ້ນແຫ່ງວິນຍານຈຶ່ງບໍ່ມີ ເມື່ອວິນຍານນັ້ນບໍ່ຕັ້ງໝັ້ນແລ້ວ ບໍ່ຈະເລີນຂຶ້ນແລ້ວ ນະຕິຈຶ່ງບໍ່ມີ ເມື່ອນຕິບໍ່ມີ ຄະຕິພົບໃນການວຽນມາຈຶ່ງບໍ່ມີ ເມື່ອຄະຕິພົບໃນການວຽນມາບໍ່ມີ ຈຸຕິແລະອຸບັດຈຶ່ງບໍ່ມີ ເມື່ອຈຸຕິແລະອຸບັດບໍ່ມີ ຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

**ຕະຕິຍະເຈຕະນາສູດທີ ໑໐ ຈົບ**

**ກະລາຣະຂັດຕິຍະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ພູຕະສູດ | ໒. ກະລາຣະສູດ |
| ໓. ຍານະວັດຖຸສູດ | ໔. ທຸຕິຍະຍານະວັດຖຸສູດ |
| ໕. ອະວິດຊາປັດຈະຍະສູດ | ໖. ທຸຕິຍະອະວິດຊາປັດຈະຍະສູດ |
| ໗. ນະຕຸມະຫະສູດ | ໘. ເຈຕະນາສູດ |
| ໙. ທຸຕິຍະເຈຕະນາສູດ | ໑໐. ຕະຕິຍະເຈຕະນາສູດ |

# ໕. ຄະຫະປະຕິວັກ

## ໝວດວ່າດ້ວຍຄະຫະບໍດີ

# ໑. ປັນຈະເວຣະພະຍະສູດ

## ວ່າດ້ວຍໄພເວນ ໕ ປະການ

[໔໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ຄັ້ງນັ້ນແລ ທ່ານອະນາຖະບິນທິກະຄະຫະບໍດີ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານອະນາຖະບິນທິກະຄະຫະບໍດີດັ່ງນີ້ ວ່າ

ຄະຫະບໍດີ ເມື່ອໃດແລ ໄພເວນ ໕ ປະການນີ້ຂອງອະຣິຍະສາວົກສະງົບແລ້ວ ເມື່ອນັ້ນອະຣິຍະສາວົກຜູ້ປະກອບດ້ວຍທຳທີ່ເປັນອົງແຫ່ງໂສດາປັດຕິຜົນ ໔ ປະການ ແລະຍາຍະທຳອັນປະເສີດ ທີ່ອະຣິຍະສາວົກນັ້ນເຫັນດີແລ້ວ ແທງຕະຫຼອດດີແລ້ວດ້ວຍປັນຍາ ອະຣິຍະສາວົກນັ້ນຫວັງຢູ່ ເພິ່ງພະຍາກອນຕົນດ້ວຍຕົນເອງໄດ້ວ່າ ເຮົາເປັນຜູ້ມີນະຣົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີເຜດວິໄສໝົດແລ້ວ ມີອະບາຍ ທຸຄະຕິ ວິນິບາດໝົດແລ້ວ ເຮົາເປັນໂສດາບັນ ມີອັນບໍ່ຕົກຕ່ຳເປັນທຳມະດາ ເປັນຜູ້ຈະຕັດສະຣູ້ໃນພາຍໜ້າ ຢ່າງແນ່ນອນ

ໄພເວນ ໕ ປະການສະງົບແລ້ວ ເປັນແນວໃດ? ຄື

໑. ບຸກຄົນຜູ້ຂ້າສັດ ຍ່ອມປະສົບໄພເວນໃດ ເຊິ່ງມີໃນຊາດນີ້ແດ່ ຊາດໜ້າແດ່ ສະເຫວີຍທຸກໂທມະນັດທາງໃຈແດ່ ຍ້ອນການຂ້າສັດເປັນປັດໄຈ ໄພເວນນັ້ນ ຂອງອະຣິຍະສາວົກຜູ້ເວັ້ນຂາດຈາກການຂ້າສັດ ສະງົບແລ້ວດ້ວຍປະການດັ່ງນີ້

໒. ບຸກຄົນຜູ້ລັກຊັບ ຍ່ອມປະສົບໄພເວນໃດ ເຊິ່ງມີໃນຊາດນີ້ແດ່ ຊາດໜ້າແດ່ ສະເຫວີຍທຸກໂທມະນັດທາງໃຈແດ່ ຍ້ອນການລັກຊັບເປັນປັດໄຈ ໄພເວນນັ້ນ ຂອງອະຣິຍະສາວົກຜູ້ເວັ້ນຂາດຈາກການລັກຊັບສະງົບແລ້ວ ດ້ວຍປະການດັ່ງນີ້

໓. ບຸກຄົນຜູ້ປະພຶດຜິດໃນກາມ ຍ່ອມປະສົບໄພເວນໃດ ເຊິ່ງມີໃນຊາດນີ້ແດ່ ຊາດໜ້າແດ່ ສະເຫວີຍທຸກໂທມະນັດທາງໃຈແດ່ ຍ້ອນການປະພຶດຜິດໃນກາມເປັນປັດໄຈ ໄພເວນນັ້ນຂອງອະຣິຍະສາວົກ ຜູ້ເວັ້ນຂາດຈາກການປະພຶດຜິດໃນກາມສະງົບແລ້ວ ດ້ວຍປະການດັ່ງນີ້

໔. ບຸກຄົນຜູ້ເວົ້າຕົວະ ຍ່ອມປະສົບໄພເວນໃດ ເຊິ່ງມີໃນຊາດນີ້ແດ່ ຊາດໜ້າແດ່ ສະເຫວີຍທຸກໂທມະນັດທາງໃຈແດ່ ຍ້ອນການເວົ້າຕົວະເປັນປັດໄຈ ໄພເວນນັ້ນຂອງອະຣິຍະສາວົກຜູ້ເວັ້ນຂາດຈາກການເວົ້າຕົວະສະງົບແລ້ວ ດ້ວຍປະການດັ່ງນີ້

໕. ບຸກຄົນຜູ້ຕັ້ງຢູ່ໃນຄວາມຜະໝາດ ຍ້ອນການເສບຂອງມຶນເມົາຄືສຸຣາແລະເມໄຣ ຍ່ອມປະສົບໄພເວນໃດ ເຊິ່ງມີໃນຊາດນີ້ແດ່ ຊາດໜ້າແດ່ ສະເຫວີຍທຸກໂທມະນັດທາງໃຈແດ່ ຍ້ອນການເສບຂອງມຶນເມົາຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດເປັນປັດໄຈ ໄພເວນນັ້ນຂອງອະຣິຍະສາວົກ ຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດສະງົບແລ້ວ ດ້ວຍປະການດັ່ງນີ້ ໄພເວນ ໕ ປະການນີ້ ສະງົບແລ້ວ

ອະຣິຍະສາວົກ ຜູ້ປະກອບດ້ວຍທຳທີ່ເປັນອົງແຫ່ງໂສດາປັດຕິຜົນ ໔ ປະການ ເປັນແນວໃດ ຄື

໑. ອະຣິຍະສາວົກ ໃນທຳວິໄນນີ້ ຜູ້ປະກອບດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຍຽ້ມ ເປັນສາດສະດາຂອງເທວະດາແລະມະນຸດ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

໒. ອະຣິຍະສາວົກ ຜູ້ປະກອບດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະທຳວ່າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນຮຽກໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃສ່ຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

໓. ອະຣິຍະສາວົກ ຜູ້ປະກອບດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງ ປະຕິບັດສົມຄວນ ໄດ້ແກ່ ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

໔. ອະຣິຍະສາວົກ ຜູ້ປະກອບດ້ວຍສີນທີ່ພຣະອະຣິຍະປາຖະໜາ ອັນບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ອັນວິນຍູຊົນສັນເສີນ ອັນຕັນຫາ ແລະ ທິດຖິຖືກຕ້ອງບໍ່ໄດ້ ເປັນໄປເພື່ອສະມາທິ

ອະຣິຍະສາວົກ ຜູ້ປະກອບດ້ວຍທຳທີ່ເປັນອົງແຫ່ງໂສດາປັດຕິຜົນ ໔ ປະການເປັນແນວນີ້

ຍາຍະທຳອັນປະເສີດ ທີ່ອະຣິຍະສາວົກເຫັນດີແລ້ວ ແທງຕະຫຼອດດີແລ້ວດ້ວຍປັນຍາ ເປັນແນວໃດ? ຄື

ຄະຫະບໍດີ ອະຣິຍະສາວົກໃນທຳວິໄນນີ້ ຍ່ອມມະນະສິການປະຕິດຈະສະມຸບບາດໂດຍແຍບຄາຍ ວ່າ

ຍ້ອນເຫດນີ້ ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ເມື່ອສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ
ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ ຍ້ອນສິ່ງນີ້ດັບ ສິ່ງນີ້ຈຶ່ງດັບ

ຄື ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຣູບຈຶ່ງມີ

ຯລຯ

ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ
ຍ້ອນສັງຂານດັບ ວິນຍານຈຶ່ງດັບ

ຯລຯ

ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ຍາຍະທຳອັນປະເສີດນີ້ ອະຣິຍະສາວົກນັ້ນເຫັນດີແລ້ວ ແທງຕະຫຼອດດີແລ້ວດ້ວຍປັນຍາ

ຄະຫະບໍດີ ເມື່ອໃດແລ ໄພເວນ ໕ ປະການນີ້ຂອງອະຣິຍະສາວົກສະງົບແລ້ວ ເມື່ອນັ້ນ ອະຣິຍະສາວົກ ຜູ້ປະກອບດ້ວຍທຳທີ່ເປັນອົງແຫ່ງໂສດາປັດຕິຜົນ ໔ ປະການ ແລະຍາຍະທຳອັນປະເສີດ ທີ່ອະຣິຍະສາວົກນັ້ນເຫັນດີແລ້ວ ແທງຕະຫຼອດດີແລ້ວດ້ວຍປັນຍາ ອະຣິຍະສາວົກນັ້ນຫວັງຢູ່ ເພິ່ງພະຍາກອນຕົນດ້ວຍຕົນເອງໄດ້ວ່າ ເຮົາເປັນຜູ້ມີນະຣົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີເຜດວິໄສໝົດແລ້ວ ມີອະບາຍ ທຸຄະຕິ ວິນິບາດໝົດແລ້ວ ເຮົາເປັນໂສດາບັນ ມີອັນບໍ່ຕົກຕ່ຳເປັນທຳມະດາ ເປັນຜູ້ຈະຕັດສະຣູ້ໃນພາຍໜ້າຢ່າງແນ່ນອນ

**ປັນຈະເວນພະຍະສູດທີ່ ໑ ຈົບ**

# ๘. ທຸຕິຍະປັນຈະເວຣະພະຍະສູດ

## ວ່າດ້ວຍໄພເວນ ๕ ປະການ ສູດທີ ๘

[໘๘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ເມື່ອໃດແລ ໄພເວນ ๕ ປະການນີ້ຂອງອະຣິຍະສາວົກສະງົບແລ້ວ ເມື່ອນັ້ນ ອະຣິຍະສາວົກຜູ້ປະກອບດ້ວຍທຳທີ່ເປັນອົງແຫ່ງໂສດາປັດຕິຜົນ ๔ ປະການ ແລະຍາຍະທຳ ອັນປະເສີດ ທີ່ອະຣິຍະສາວົກນັ້ນເຫັນດີແລ້ວ ແທງຕະຫຼອດດີແລ້ວດ້ວຍປັນຍາ ອະຣິຍະສາວົກນັ້ນ ຫວັງຢູ່ ເພິ່ງພະຍາກອນຕົນດ້ວຍຕົນເອງໄດ້ວ່າ ເຮົາເປັນຜູ້ມີນະຣົກໝົດແລ້ວ ຯລຯ ມີອັນບໍ່ຕົກຕ່ຳເປັນທຳມະດາ ເປັນຜູ້ຈະຕັດສະຮູ້ໃນພາຍໜ້າຢ່າງແນ່ນອນ

ໄພເວນ ๕ ປະການສະງົບແລ້ວ ເປັນແນວໃດ? ຄື

๑. ບຸກຄົນຜູ້ຂ້າສັດ ຯລຯ
๘. ບຸກຄົນຜູ້ລັກຊັບ ຯລຯ
໓. ບຸກຄົນຜູ້ປະພຶດຜິດໃນກາມ ຯລຯ
๔. ບຸກຄົນຜູ້ເວົ້າຕົວະ ຯລຯ
๕. ບຸກຄົນຜູ້ຕັ້ງຢູ່ໃນຄວາມຜະໝາດ ຍ້ອນເສບຂອງມຶນເມົາຄືສຸຣາແລະເມໄຣ ຯລຯ

ໄພເວນ ๕ ປະການນີ້ສະງົບແລ້ວ

ອະຣິຍະສາວົກ ຜູ້ປະກອບດ້ວຍທຳທີ່ເປັນອົງແຫ່ງໂສດາປັດຕິຜົນ ๔ ປະການ ເປັນແນວໃດ? ຄື

๑. ອະຣິຍະສາວົກໃນທຳວິໄນນີ້ ຜູ້ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະ ພຸດທະເຈົ້າ ຯລຯ
๘. ໃນພຣະທຳ ຯລຯ
໓. ໃນພຣະສົງ ຯລຯ
๔. ອະຣິຍະສາວົກຜູ້ປະກອບດ້ວຍສີນທີ່ພຣະອະຣິຍະປາຖະໜາ ຯລຯ

ອະຣິຍະສາວົກຜູ້ປະກອບດ້ວຍທຳທີ່ເປັນອົງແຫ່ງໂສດາປັດຕິຜົນ ๔ ປະການນີ້

ຍານະທຳອັນປະເສີດ ທີ່ອະຣິຍະສາວົກເຫັນດີແລ້ວ ແທງຕະຫຼອດດີແລ້ວດ້ວຍປັນຍາ ເປັນແນວໃດ? ຄື

ພິກຂຸທັງຫຼາຍ ອະຣິຍະສາວົກໃນທຳວິໄນນີ້ ຍ່ອມມະນະສິການປະຕິດຈະສະມຸບບາດ ໂດຍແຍບຄາຍ ຯລຯ

ພິກຂຸທັງຫຼາຍ ຍານະທຳອັນປະເສີດ ທີ່ອະຣິຍະສາວົກນັ້ນເຫັນດີແລ້ວ ແທງຕະຫຼອດດີ ແລ້ວດ້ວຍປັນຍາ

ພິກຂຸທັງຫຼາຍ ເມື່ອໃດແລ ໄພເວນ ໕ ປະການນີ້ຂອງອະຣິຍະສາວົກສະງົບແລ້ວ ເມື່ອນັ້ນ ອະຣິຍະສາວົກຜູ້ປະກອບດ້ວຍທຳທີ່ເປັນອົງແຫ່ງໂສດາປັດຕິຜົນ ໔ ປະການນີ້ ແລະຍານະທຳອັນປະເສີດນີ້ ທີ່ອະຣິຍະສາວົກນັ້ນເຫັນດີແລ້ວ ແທງຕະຫຼອດດີແລ້ວດ້ວຍປັນຍາ ອະຣິຍະສາວົກນັ້ນຫວັງຢູ່ ເພິ່ງພະຍາກອນຕົນດ້ວຍຕົນເອງໄດ້ວ່າ ເຮົາເປັນຜູ້ມີນະຣົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີເປດວິໄສໝົດແລ້ວ ມີອະບາຍ ທຸຄະຕິ ວິນິບາດໝົດແລ້ວ ເຮົາເປັນໂສດາບັນ ມີອັນບໍ່ຕົກຕ່ຳເປັນທຳມະດາ ເປັນຜູ້ຈະຕັດສະຣູ້ໃນພາຍໜ້າຢ່າງແນ່ນອນ

**ທຸຕິຍະປັນຈະເວຣະພະຍະສູດທີ ໘ ຈົບ**

# ໙. ທຸກຂະສູດ

## ວ່າດ້ວຍທຸກ

[໔໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມເກີດແຫ່ງທຸກ ແລະຄວາມດັບແຫ່ງທຸກ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ຄວາມເກີດແຫ່ງທຸກ ເປັນແນວໃດ?

ຄື ຍ້ອນອາໄສຈັກຂຸ (ຕາ) ແລະ ຣູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຄວາມເກີດແຫ່ງທຸກ ເປັນແນວນີ້

ຍ້ອນອາໄສໂສຕະ (ຫູ) ແລະ ສຽງ ໂສຕະວິນຍານຈຶ່ງເກີດ ຯລຯ ຍ້ອນອາໄສຄານະ (ດັງ) ແລະກິ່ນ ຯລຯ ຍ້ອນອາໄສຊິວຫາ (ລີ້ນ) ແລະຣົດ ຯລຯ ຍ້ອນອາໄສກາຍແລະໂຜດຖັບພະ ຯລຯ ຍ້ອນອາໄສມະໂນ (ໃຈ) ແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການ ເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ

ຄວາມເກີດແຫ່ງທຸກ ເປັນແນວນີ້ແລ

ຄວາມດັບແຫ່ງທຸກ ເປັນແນວໃດ?

ຄື ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫານັ້ນດັບໄປບໍ່ເຫຼືອດ້ວຍວິຣາຄະ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຍ້ອນພົບດັບ ຊາດຈຶ່ງດັບ ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ ດ້ວຍປະການດັ່ງນີ້

ຄວາມດັບແຫ່ງທຸກ ເປັນແນວນີ້ແລ

ຍ້ອນອາໄສໂສຕະແລະສຽງ ໂສຕະວິນຍານຈຶ່ງເກີດ ຯລຯ ຍ້ອນອາໄສຄານະແລະກິ່ນ ຯລຯ ຍ້ອນອາໄສຊິວຫາແລະຣົດ ຯລຯ ຍ້ອນອາໄສກາຍແລະໂຜດຖັບພະ ຯລຯ ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫານັ້ນ ດັບໄປບໍ່ເຫຼືອດ້ວຍວິຣາຄະ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຍ້ອນພົບດັບ ຊາດຈຶ່ງດັບ ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ພິກຂຸທັງຫຼາຍ ຄວາມດັບແຫ່ງທຸກ ເປັນແນວນີ້ແລ

**ທຸກຂະສູດທີ ໓ ຈົບ**

# ໔. ໂລກະສູດ

## ວ່າດ້ວຍໂລກ

[໔໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມເກີດ ແລະ ຄວາມດັບແຫ່ງໂລກ ທ່ານທັງຫຼາຍຈົ່ງຟັງ ຯລຯ

ຄວາມເກີດແຫ່ງໂລກ ເປັນແນວໃດ?

ຄື ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງເກີດ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງເກີດ ຍ້ອນພົບເປັນປັດໄຈ ຊາດຈຶ່ງເກີດ ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດ

ຄວາມເກີດແຫ່ງໂລກ ເປັນແນວນີ້

ຍ້ອນອາໄສໂສຕະແລະສຽງ ຯລຯ ຍ້ອນອາໄສຄານະແລະກິ່ນ ຯລຯ ຍ້ອນອາໄສຊິວຫາແລະຣົດ ຯລຯ ຍ້ອນອາໄສກາຍແລະໂຜດຖັບພະ ຯລຯ ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຯລຯ ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດ

ຄວາມເກີດແຫ່ງໂລກ ເປັນແນວນີ້ແລ

ຄວາມດັບແຫ່ງໂລກ ເປັນແນວໃດ?

ຄື ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫານັ້ນ ດັບໄປບໍ່ເຫຼືອດ້ວຍວິຣາຄະ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ຄວາມດັບແຫ່ງໂລກ ເປັນແນວນີ້ແລ

ຍ້ອນອາໄສໂສຕະແລະສຽງ ຯລຯ ຍ້ອນອາໄສຄານະແລະກິ່ນ ຯລຯ ຍ້ອນອາໄສຊິວຫາແລະຣົດ ຯລຯ ຍ້ອນອາໄສກາຍແລະໂຜດຖັບພະ ຯລຯ ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫານັ້ນ ດັບໄປບໍ່ເຫຼືອດ້ວຍ

ວິຣາຄະ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ຄວາມດັບແຫ່ງໂລກ ເປັນແນວນີ້ແລ

**ໂລກະສູດທີ ໔ ຈົບ**

# ໕. ຍາຕິກະສູດ

## ວ່າດ້ວຍການສະແດງທຳ ຢູ່ໝູ່ບ້ານຍາຕິກະ

[໔໕] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃນຕຳໜັກດິນຈີ່ ໃກ້ໝູ່ບ້ານຍາຕິກະ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຫຼີກຫຼີກຢູ່ໃນບ່ອນສະງັດໄດ້ຕັດທຳບັນລະຍາຍນີ້ວ່າ

ຍ້ອນອາໄສຈັກຂຸແລະຣູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງເກີດ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ຍ້ອນອາໄສໂສຕະແລະສຽງ ຯລຯ ຍ້ອນອາໄສຄານະແລະກິ່ນ ຯລຯ ຍ້ອນອາໄສຊິວຫາແລະຣົດ ຯລຯ ຍ້ອນອາໄສກາຍແລະໂຜດຖັບພະ ຯລຯ ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງເກີດ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ຍ້ອນອາໄສຈັກຂຸແລະຣູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫານັ້ນ ດັບໄປບໍ່ເຫຼືອດ້ວຍວິຣາຄະ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ຍ້ອນອາໄສໂສຕະແລະສຽງ ຯລຯ ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫານັ້ນດັບໄປບໍ່ເຫຼືອດ້ວຍວິຣາຄະ ອຸປາທານ

ຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ສະໄໝນັ້ນ ພິກຂຸອົງໜຶ່ງ ຢືນຈອບຟັງພຣະຜູ້ມີພຣະພາກເຈົ້າຢູ່ ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນພິກຂຸນັ້ນ ຜູ້ຢືນຈອບຟັງຢູ່ ໄດ້ຕັດຖາມພິກຂຸນັ້ນດັ່ງນີ້ວ່າ ພິກຂຸ ທ່ານໄດ້ຟັງທຳບັນລະຍາຍນີ້ແດ່ບໍ?

ຂ້າພຣະອົງ ໄດ້ຟັງຢູ່ ຂ້ານ້ອຍ

ພິກຂຸ ທ່ານຈົ່ງສຶກສາທຳບັນຍາຍາຍນີ້ ຈົ່ງຮ່ຳຮຽນທຳບັນລະຍາຍນີ້ ຈົ່ງຊົງຈຳທຳບັນລະຍາຍນີ້ ຍ້ອນທຳບັນລະຍາຍນີ້ປະກອບດ້ວຍປະໂຫຍດ ເປັນເບື້ອງຕົ້ນແຫ່ງພົມມະຈັນ

**ຍາຕິກະສູດທີ ໕ ຈົບ**

# ໖. ອັນຍະຕະຣະພາມມະນະສູດ

## ວ່າດ້ວຍພາມຜູ້ໜຶ່ງ

[໔໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ຄັ້ງນັ້ນ ພາມຜູ້ໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນກັບພຣະຜູ້ພຣະພາກເຈົ້າ ແລ້ວນັ່ງຢູ່ບ່ອນທີ່ສົມຄວນເມື່ອແລ້ວ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ທ່ານພຣະໂຄດົມ ຄົນນັ້ນເຮັດເຫດ ຄົນນັ້ນສະເຫວີຍຜົນບໍນໍ

ພາມ ໂວຫານນີ້ວ່າ ຄົນນັ້ນເຮັດເຫດ ຄົນນັ້ນສະເຫວີຍຜົນ ນີ້ເປັນບ່ອນສຸດ ຢ່າງໜຶ່ງ

ທ່ານພຣະໂຄດົມ ກໍຄົນອື່ນເຮັດເຫດ ຄົນອື່ນສະເຫວີຍຜົນບໍ

ພາມ ໂວຫານນີ້ວ່າ ຄົນອື່ນເຮັດເຫດ ຄົນອື່ນສະເຫວີຍຜົນ ນີ້ເປັນບ່ອນສຸດອີກ ຢ່າງໜຶ່ງ ຕະຖາຄົດບໍ່ເຂົ້າໄປໃກ້ບ່ອນສຸດ ໒ ແນວນັ້ນ ຍ່ອມສະແດງທຳໂດຍສາຍກາງວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຄວາມເກີດແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້ ອັນໜຶ່ງ ຍ້ອນອະວິດຊາ ດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດ ແນວນີ້ແລ້ວ ພາມນັ້ນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນນ່ວນຫຼາຍ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນນ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມໂຜດຊົງຈຳ ຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ອັນຍະຕະຣະພາມມະນະສູດທີ ໖ ຈົບ**

# ໗. ຊານຸດໂສນີສູດ

## ວ່າດ້ວຍຊານຸດໂສນີພາມ

[໘໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ຄັ້ງນັ້ນແລ ຊານຸດໂສນີພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ເມື່ອແລ້ວ ຊານຸດໂສນີພາມໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ທ່ານພຣະໂຄດົມ ສິ່ງທັງປວງມີບໍ?<br>
ພາມ ໂວຫານນີ້ວ່າ ສິ່ງທັງປວງມີ ນີ້ເປັນບ່ອນສຸດແນວໜຶ່ງ<br>
ທ່ານພຣະໂຄດົມ ກໍສິ່ງທັງປວງບໍ່ມີບໍ?<br>
ພາມ ໂວຫານນີ້ວ່າ ສິ່ງທັງປວງບໍ່ມີ ນີ້ເປັນບ່ອນສຸດອີກແນວໜຶ່ງ

ຕະຖາຄົດບໍ່ເຂົ້າໄປໃກ້ບ່ອນສຸດ ໒ ຢ່າງນັ້ນ ຍ່ອມສະແດງທຳໂດຍສາຍກາງວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດ ຢ່າງນີ້ແລ້ວ ຊານຸດໂສນີພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນນ່ວນຫຼາຍ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນນ່ວນຫຼາຍ ຯລຯ ເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ຊານຸດໂສນີສູດທີ ໗ ຈົບ**

# ๓. ໂລກາຍະຕິກະສູດ

## ວ່າດ້ວຍພາມຜູ້ຮອບຮູ້ຄຳພີໂລກາຍະຕະ

[໔๓] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ຄັ້ງນັ້ນແລ ພາມຜູ້ຮອບຮູ້ຄຳພີໂລກາຍະຕະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ເມື່ອແລ້ວ ພາມຜູ້ຮອບຮູ້ຄຳພີໂລກາຍະຕະ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ທ່ານພຣະໂຄດົມ ສິ່ງທັງປວງມີບໍ?
ພາມ ຂໍ້ທີ່ວ່າ ສິ່ງທັງປວງມີ ນີ້ ເປັນໂລກາຍະຕະຂໍ້ທີ ໑
ທ່ານພຣະໂຄດົມ ກໍສິ່ງທັງປວງບໍ່ມີແມ່ນບໍ?
ພາມ ຂໍ້ທີ່ວ່າ ສິ່ງທັງປວງບໍ່ມີ ນີ້ ເປັນໂລກາຍະຕະຂໍ້ທີ ໒
ທ່ານພຣະໂຄດົມ ສິ່ງທັງປວງມີສະພາບເປັນແນວດຽວກັນແມ່ນບໍ?
ພາມ ຂໍ້ທີ່ວ່າ ສິ່ງທັງປວງມີສະພາບເປັນແນວດຽວກັນ ນີ້ ເປັນໂລກາຍະຕະ ຂໍ້ທີ ໓
ທ່ານພຣະໂຄດົມ ກໍສິ່ງທັງປວງມີສະພາບຕ່າງກັນແມ່ນບໍ?
ພາມ ຂໍ້ທີ່ວ່າ ສິ່ງທັງປວງມີສະພາບຕ່າງກັນ ນີ້ ເປັນໂລກາຍະຕະຂໍ້ທີ ໔

ຕະຖາຄົດບໍ່ເຂົ້າໄປໃກ້ບ່ອນສຸດ ໒ ຢ່າງນັ້ນ ຍ່ອມສະແດງທຳໂດຍສາຍກາງວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານທັງຫຼາຍຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດ ຢ່າງນີ້ແລ້ວພາມຜູ້ຮອບຮູ້ຄຳພີໂລກາຍະຕະໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ໂລກາຍະຕິກະສູດທີ ๓ ຈົບ**

# ໙. ອະຣິຍະສາວະກະສູດ

## ວ່າດ້ວຍອະຣິຍະສາວົກ

[໔໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ຯລຯ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບ ຈຶ່ງບໍ່ມີຄວາມສົງໄສ ຢ່າງນີ້ວ່າເມື່ອອັນໃດມີ ອັນໃດຈຶ່ງມີ ຍ້ອນອັນໃດເກີດຂຶ້ນ ອັນໃດຈຶ່ງເກີດຂຶ້ນ (ຍ້ອນອັນໃດມີ ສັງຂານທັງຫຼາຍຈຶ່ງມີ ຍ້ອນອັນໃດມີ ວິນຍານຈຶ່ງມີ) ເມື່ອອັນໃດມີ ນາມຮູບຈຶ່ງມີ ເມື່ອອັນໃດມີ ສະລາຍະຕະນະຈຶ່ງມີ ເມື່ອອັນໃດມີ ຜັດສະຈຶ່ງມີ ເມື່ອອັນໃດມີ ເວທະນາຈຶ່ງມີ ເມື່ອອັນໃດມີ ຕັນຫາຈຶ່ງມີ ເມື່ອອັນໃດມີ ອຸປາທານຈຶ່ງມີ ເມື່ອອັນໃດມີ ພົບຈຶ່ງມີ ເມື່ອອັນໃດມີ ຊາດຈຶ່ງມີ ເມື່ອອັນໃດມີ ຊະຣາແລະມໍລະນະຈຶ່ງມີ?

ໂດຍແທ້ທີ່ຈິງ ອະຣິຍະສາວົກຜູ້ໄດ້ສະດັບ ຈຶ່ງມີຍານຢັ່ງຮູ້ໃນເລື້ອງນີ້ ໂດຍບໍ່ຕ້ອງເຊື່ອຜູ້ອື່ນວ່າ ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ (ເມື່ອອະວິດຊາມີ ສັງຂານທັງຫຼາຍຈຶ່ງມີ ເມື່ອສັງຂານທັງຫຼາຍມີ ວິນຍານຈຶ່ງມີ) ເມື່ອວິນຍານມີ ນາມຮູບຈຶ່ງມີ ເມື່ອນາມຮູບມີ ສະລາຍະຕະນະຈຶ່ງມີ ເມື່ອສະລາຍະຕະນະມີ ຜັດສະຈຶ່ງມີ ເມື່ອຜັດສະມີ ເວທະນາຈຶ່ງມີ ເມື່ອເວທະນາມີ ຕັນຫາຈຶ່ງມີ ເມື່ອຕັນຫາມີ ອຸປາທານຈຶ່ງມີ ເມື່ອອຸປາທານມີ ພົບຈຶ່ງມີ ຯລຯ ເມື່ອຊາດມີ ຊະຣາແລະມໍລະນະຈຶ່ງມີ ອະຣິຍະສາວົກນັ້ນຮູ້ແຈ້ງ ແນວນີ້ວ່າໂລກນີ້ເກີດຂຶ້ນແນວນີ້

ອະຣິຍະສາວົກຜູ້ໄດ້ສະດັບ ຈຶ່ງບໍ່ມີຄວາມສົງໄສ ແນວນີ້ວ່າເມື່ອອັນໃດບໍ່ມີ ອັນໃດຈຶ່ງບໍ່ມີ ຍ້ອນອັນໃດດັບ ອັນໃດຈຶ່ງດັບ (ເມື່ອອັນໃດບໍ່ມີ ສັງຂານທັງຫຼາຍຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ວິນຍານຈຶ່ງບໍ່ມີ) ເມື່ອອັນໃດບໍ່ມີ ນາມຮູບຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ສະລາຍະຕະນະຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ຜັດສະຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ເວທະນາຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ຕັນຫາຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ອຸປາທານຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ພົບຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ຊາດຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ

ໂດຍແທ້ທີ່ຈິງ ອະຣິສາວົກຜູ້ໄດ້ສະດັບ ຈຶ່ງມີຍານຢັ່ງຮູ້ໃນເລື້ອງນີ້ ໂດຍບໍ່ຕ້ອງເຊື່ອຜູ້ອື່ນວ່າ ເມື່ອສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ ຍ້ອນສິ່ງນີ້ດັບ ສິ່ງນີ້ຈຶ່ງດັບ (ເມື່ອອະວິດຊາບໍ່ມີ ສັງຂານທັງຫຼາຍຈຶ່ງບໍ່ມີ ເມື່ອສັງຂານທັງຫຼາຍບໍ່ມີ ວິນຍານຈຶ່ງບໍ່ມີ) ເມື່ອວິນຍານບໍ່ມີ ນາມຮູບຈຶ່ງບໍ່ມີ ເມື່ອນາມຮູບບໍ່ມີ ສະລາຍະຕະນະຈຶ່ງບໍ່ມີ ຯລຯ ອຸປາທານຈຶ່ງບໍ່ມີ ຯລຯ ພົບຈຶ່ງບໍ່ມີ ຯລຯ ຊາດຈຶ່ງບໍ່ມີ ເມື່ອຊາດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ ອະຣິຍະສາວົກນັ້ນຮູ້ແຈ້ງແນວນີ້ວ່າ ໂລກນີ້ດັບແນວນີ້

ພິກຂຸທັງຫຼາຍ ເມື່ອໃດແລ ອະຣິຍະສາວົກຮູ້ແຈ້ງຄວາມເກີດ ແລະ ຄວາມດັບໄປແຫ່ງໂລກຕາມຄວາມເປັນຈິງແນວນີ້ ເມື່ອນັ້ນ ອະຣິຍະສາວົກນີ້ ເຮົາຮຽກວ່າ ເປັນຜູ້ເຖິງພ້ອມດ້ວຍທິດຖິແດ່ ຯລຯ ດຳລົງຢູ່ໃກ້ປະຕູອະມະຕະນິບພານແດ່

**ອະຣິຍະສາວະກະສູດທີ ໙ ຈົບ**

# ໑໐. ທຸຕິຍະອະຣິຍະສາວະກະສູດ

## ວ່າດ້ວຍອະຣິຍະສາວົກ ສູດທີ ໘

[໘໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ຯລຯ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບ ຈຶ່ງບໍ່ມີຄວາມສົງໄສ ຢ່າງນີ້ວ່າເມື່ອອັນໃດມີ ອັນໃດຈຶ່ງມີ ຍ້ອນອັນໃດເກີດຂຶ້ນ ອັນໃດຈຶ່ງເກີດຂຶ້ນ ເມື່ອອັນໃດມີ ສັງຂານທັງຫຼາຍຈຶ່ງມີ ເມື່ອອັນໃດມີ ວິນຍານຈຶ່ງມີ ເມື່ອອັນໃດມີ ນາມຮູບຈຶ່ງມີ ເມື່ອອັນໃດມີ ສະລາຍະຕະນະຈຶ່ງມີ ເມື່ອອັນໃດມີ ຜັດສະ ຈຶ່ງມີ ເມື່ອອັນໃດມີ ເວທະນາຈຶ່ງມີ ເມື່ອອັນໃດມີ ຕັນຫາຈຶ່ງມີ ເມື່ອອັນໃດມີ ອຸປາທານຈຶ່ງມີ ເມື່ອອັນໃດມີ ພົບຈຶ່ງມີ ເມື່ອອັນໃດມີ ຊາດຈຶ່ງມີ ເມື່ອອັນໃດມີ ຊະຣາແລະມໍລະນະຈຶ່ງມີ

ໂດຍແທ້ທີ່ຈິງ ອະຣິຍະສາວົກຜູ້ໄດ້ສະດັບ ຈຶ່ງມີຍານຢັ່ງຮູ້ໃນເລື້ອງນີ້ ໂດຍບໍ່ຕ້ອງເຊື່ອຜູ້ອື່ນວ່າ ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ ເມື່ອອະວິດຊາມີ ສັງຂານທັງຫຼາຍຈຶ່ງມີ ເມື່ອສັງຂານທັງຫຼາຍມີ ວິນຍານຈຶ່ງມີ ເມື່ອວິນຍານມີ ນາມຮູບຈຶ່ງມີ ເມື່ອນາມຮູບມີ ສະລາຍະຕະນະຈຶ່ງມີ ເມື່ອສະລາຍະຕະນະມີ ຜັດສະຈຶ່ງມີ ເມື່ອຜັດສະມີ ເວທະນາຈຶ່ງມີ ເມື່ອ ເວທະນາມີ ຕັນຫາຈຶ່ງມີ ເມື່ອຕັນຫາມີ ອຸປາທານຈຶ່ງມີ ເມື່ອອຸປາທານມີ ພົບຈຶ່ງມີ ເມື່ອພົບມີ ຊາດຈຶ່ງມີ ເມື່ອຊາດມີ ຊະຣາແລະມໍລະນະຈຶ່ງມີ ອະຣິຍະສາວົກນັ້ນຮູ້ແຈ້ງ ແນວນີ້ວ່າໂລກນີ້ເກີດຂຶ້ນແນວນີ້

ອະຣິຍະສາວົກຜູ້ໄດ້ສະດັບ ຈຶ່ງບໍ່ມີຄວາມສົງໄສແນວນີ້ວ່າ ເມື່ອອັນໃດບໍ່ມີ ອັນໃດຈຶ່ງບໍ່ມີ ຍ້ອນອັນໃດດັບ ອັນໃດຈຶ່ງດັບ ເມື່ອອັນໃດບໍ່ມີ ສັງຂານທັງຫຼາຍຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ວິນຍານຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ນາມຮູບຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ສະລາຍະຕະນະຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ຜັດສະຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ເວທະນາຈຶ່ງບໍ່ມີ ເມື່ອອັນໃດບໍ່ມີ ຕັນຫາຈຶ່ງບໍ່ມີ ຯລຯ ອຸປາທານ ຯລຯ ພົບ ຯລຯ ຊາດ ຯລຯ ເມື່ອອັນໃດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ

ໂດຍແທ້ທີ່ຈິງ ອະຣິສາວົກຜູ້ໄດ້ສະດັບ ຈຶ່ງມີຍານຢັ່ງຮູ້ໃນເລື້ອງນີ້ ໂດຍບໍ່ຕ້ອງເຊື່ອຜູ້ອື່ນວ່າ ເມື່ອສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ ຍ້ອນສິ່ງນີ້ດັບ ສິ່ງນີ້ຈຶ່ງດັບ ເມື່ອອະວິດຊາບໍ່ມີ ສັງຂານທັງຫຼາຍຈຶ່ງບໍ່ມີ ເມື່ອສັງຂານທັງຫຼາຍບໍ່ມີ ວິນຍານຈຶ່ງບໍ່ມີ ເມື່ອວິນຍານບໍ່ມີ ນາມຮູບຈຶ່ງບໍ່ມີ ເມື່ອນາມຮູບບໍ່ມີ ສະລາຍະຕະນະຈຶ່ງບໍ່ມີ ຯລຯ ເມື່ອຊາດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ ອະຣິຍະສາວົກນັ້ນຮູ້ແຈ້ງ ແນວນີ້ວ່າ ໂລກນີ້ດັບແນວນີ້

ພິກຂຸທັງຫຼາຍ ເມື່ອໃດແລ ອະຣິຍະສາວົກຮູ້ແຈ້ງຄວາມເກີດ ແລະ ຄວາມດັບໄປແຫ່ງໂລກຕາມຄວາມເປັນຈິງແນວນີ້ ເມື່ອນັ້ນ ອະຣິຍະສາວົກນີ້ ເຮົາຮຽກວ່າເປັນຜູ້ເຖິງພ້ອມດ້ວຍທິດຖິແດ່ ຜູ້ເຖິງພ້ອມດ້ວຍທັສສະນະແດ່ ຜູ້ເຖິງສັດທຳນີ້ແດ່ ເຫັນສັດທຳນີ້ແດ່ ປະກອບດ້ວຍຍານອັນເປັນເສຂະແດ່ ປະກອບດ້ວຍວິດຊາອັນເປັນເສຂະແດ່ ບັນລຸກະແສແຫ່ງທຳແດ່ ເປັນພຣະອະຣິຍະມີປັນຍາເພີກຖອນກິເລດແດ່ ດຳລົງຢູ່ໃກ້ປະຕູອະມະຕະນິບພານແດ່

**ທຸຕິຍະອະຣິຍະສາວະກະສູດທີ ໑໐ ຈົບ**

**ຄະຫະປະຕິວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໖. ທຸກຂະວັກ

## ໝວດວ່າດ້ວຍທຸກ

# ໑. ປະຣິວີມັງສະນະສູດ

### ວ່າດ້ວຍການພິຈາລະນາ

[໕໑] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍ ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ດ້ວຍເຫດພຽງທໍ່ໃດນໍ? ພິກຂຸເມື່ອພິຈາລະນາ ຈຶ່ງຊື່ວ່າ ພິຈາລະນາເພື່ອຄວາມສິ້ນທຸກໂດຍຖືກຕ້ອງ ທຸກປະການ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫລັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນທີ່ເພິ່ງ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂອກາດ ສະເພາະພຣະຜູ້ມີພຣະພາກເຈົ້າທໍ່ນັ້ນ ທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພາສິດນັ້ນໃຫ້ແຈ້ງຊັດໄດ້ ພິກຂຸທັງຫຼາຍ ຟັງຕໍ່ຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້

ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດ ວ່າ

ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ເມື່ອພິຈາລະນາ ຍ່ອມພິຈາລະນາວ່າ ຊະຣາແລະມໍລະນະນີ້ໃດ ມີທຸກຫຼາຍແນວນັບບໍ່ຖ້ວນເກີດຂຶ້ນໃນໂລກ ຊະຣາແລະມໍລະນະທີ່ເປັນທຸກ ນີ້ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດນໍ ເມື່ອອັນໃດມີ ຊະຣາແລະມໍລະນະຈຶ່ງມີ ເມື່ອອັນໃດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ ທ່ານພິຈາລະນາຢູ່ ຈຶ່ງຮູ້ແຈ້ງ ຢ່າງນີ້ວ່າຊຣາແລະມໍລະນະນີ້ໃດ ມີທຸກຫຼາຍແນວນັບບໍ່ຖ້ວນເກີດຂຶ້ນໃນໂລກ ທຸກນີ້ ມີຊາດເປັນເຫດ ມີຊາດເປັນເຫດເກີດ ມີຊາດເປັນກຳເນີດ ມີຊາດເປັນແດນເກີດ ເມື່ອຊາດມີ ຊະຣາແລະມໍລະນະຈຶ່ງມີ ເມື່ອຊາດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ ທ່ານຮູ້ແຈ້ງ

ຊະຣາແລະມໍລະນະ ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະ ຮູ້ແຈ້ງຄວາມດັບແຫ່ງຊະຣາ ແລະມໍລະນະ ຮູ້ແຈ້ງປະຕິປະທາອັນເໝາະສົມທີ່ໃຫ້ເຖິງຄວາມດັບແຫ່ງຊະຣາ ແລະ ມໍລະນະ ແລະທ່ານເປັນຜູ້ປະຕິບັດຢູ່ແນວນັ້ນ ຊື່ວ່າ ຜູ້ມີປົກກະຕິປະພຶດຕາມທຳ ເຮົາຮຽກພິກຂຸນີ້ວ່າ ເປັນຜູ້ປະຕິບັດເພື່ອຄວາມສິ້ນທຸກ ເພື່ອຄວາມດັບແຫ່ງຊະຣາ ແລະ ມໍລະນະໂດຍວິທີຖືກຕ້ອງທຸກປະການ

ອີກປະການໜຶ່ງ ພິກຂຸເມື່ອພິຈາລະນາ ຍ່ອມພິຈາລະນາວ່າ ຊາດນີ້ ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ ເມື່ອອັນໃດມີ ຊາດຈຶ່ງມີ ເມື່ອອັນໃດບໍ່ມີ ຊາດຈຶ່ງບໍ່ມີ ທ່ານພິຈາລະນາຢູ່ ຈຶ່ງຮູ້ແຈ້ງ ຢ່າງນີ້ວ່າ ຊາຕິມີພົບເປັນເຫດ ມີພົບເປັນເຫດເກີດ ມີພົບເປັນກຳເນີດ ມີພົບເປັນແດນເກີດ ເມື່ອພົບມີ ຊາດຈຶ່ງມີ ເມື່ອພົບບໍ່ມີ ຊາດຈຶ່ງບໍ່ມີ ທ່ານຮູ້ແຈ້ງຊາດ ຮູ້ແຈ້ງຄວາມເກີດແຫ່ງຊາດ ຮູ້ແຈ້ງຄວາມດັບແຫ່ງຊາດ ຮູ້ແຈ້ງປະຕິປະທາອັນເໝາະສົມທີ່ໃຫ້ເຖິງຄວາມດັບແຫ່ງຊາດ ແລະ ທ່ານຜູ້ປະຕິບັດແນວນັ້ນ ຊື່ວ່າ ຜູ້ມີປົກກະຕິປະພຶດຕາມທຳ ເຮົາຮຽກພິກຂຸນີ້ວ່າ ເປັນຜູ້ປະຕິບັດເພື່ອຄວາມສິ້ນທຸກເພື່ອຄວາດັບຊາດໂດຍວິທີຖືກຕ້ອງທຸກປະການ

| | | |
|---|---|---|
| ອີກປະການໜຶ່ງ | ພົບ | ນີ້ມີອັນໃດ? ເປັນເຫດ ໆລໆ |
| ອີກປະການໜຶ່ງ | ອຸປາທານ | ນີ້ມີອັນໃດ? ເປັນເຫດ ໆລໆ |
| ອີກປະການໜຶ່ງ | ຕັນຫາ | ນີ້ມີອັນໃດ? ເປັນເຫດ ໆລໆ |
| ອີກປະການໜຶ່ງ | ເວທະນາ | ນີ້ມີອັນໃດ? ເປັນເຫດ ໆລໆ |
| ອີກປະການໜຶ່ງ | ຜັດສະ | ນີ້ມີອັນໃດ? ເປັນເຫດ ໆລໆ |
| ອີກປະການໜຶ່ງ | ສະລາຍະຕະນະ | ນີ້ມີອັນໃດ? ເປັນເຫດ ໆລໆ |
| ອີກປະການໜຶ່ງ | ນາມຮູບ | ນີ້ມີອັນໃດ? ເປັນເຫດ ໆລໆ |
| ອີກປະການໜຶ່ງ | ວິນຍານ | ນີ້ມີອັນໃດ? ເປັນເຫດ ໆລໆ |

ອີກປະການໜຶ່ງ ພິກຂຸເມື່ອພິຈາລະນາ ຍ່ອມພິຈາລະນາວ່າ ສັງຂານເຫຼົ່ານີ້ມີອັນໃດເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ ເມື່ອອັນໃດມີ ສັງຂານທັງຫຼາຍຈຶ່ງມີ ເມື່ອອັນໃດບໍ່ມີ ສັງຂານທັງຫຼາຍຈຶ່ງບໍ່ມີ ທ່ານພິຈາລະນາຢູ່ ຈຶ່ງຮູ້ແຈ້ງແນວນີ້ ວ່າ ສັງຂານທັງຫຼາຍ ມີອະວິດຊາເປັນເຫດ ມີອະວິດຊາເປັນເຫດເກີດ ມີອະວິດຊາເປັນກຳເນີດ ມີອະວິດຊາເປັນແດນເກີດ ເມື່ອອະວິດຊາມີ ສັງຂານທັງຫຼາຍຈຶ່ງມີ ເມື່ອອະວິດຊາບໍ່ມີ ສັງຂານທັງຫຼາຍຈຶ່ງບໍ່ມີ

ພິກຂຸນັ້ນ ຮູ້ແຈ້ງສັງຂານທັງຫຼາຍ ຈຶ່ງຮູ້ແຈ້ງຄວາມເກີດແຫ່ງສັງຂານ ຮູ້ແຈ້ງຄວາມດັບແຫ່ງສັງຂານ ຮູ້ແຈ້ງປະຕິປະທາອັນເໝາະສົມທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ແລະ ທ່ານຜູ້ປະຕິບັດແນວນັ້ນ ຊື່ວ່າ ຜູ້ມີປົກກະຕິປະພຶດຕາມທຳ

ພິກຂຸທັງຫຼາຍ ເຮົາຮຽກພິກຂຸນີ້ວ່າ ເປັນຜູ້ປະຕິບັດເພື່ອຄວາມສິ້ນທຸກ ເພື່ອຄວາມດັບແຫ່ງສັງຂານໂດຍຖືກຕ້ອງ ທຸກປະການ

ບຸຣຸດບຸກຄົນນີ້ຕົກຢູ່ໃນອະວິດຊາ ຖ້າສັງຂານທີ່ເປັນບຸນປຸງແຕ່ງ ວິນຍານກໍປະກອບດ້ວຍບຸນ ຖ້າສັງຂານທີ່ເປັນບາບປຸງແຕ່ງ ວິນຍານກໍປະກອບດ້ວຍບາບ ຖ້າສັງຂານທີ່ເປັນອາເນນຊາປຸງແຕ່ງ ວິນຍານກໍປະກອບດ້ວຍອາເນນຊາ ເມື່ອໃນເວລາໃດ ພິກຂຸລະອະວິດຊາໄດ້ແລ້ວ ວິດຊາເກີດຂຶ້ນ ໃນການນັ້ນ ພິກຂຸນັ້ນ ກໍບໍ່ປຸງແຕ່ງປຸນຍາພິສັງຂານ ອະປຸນຍາພິສັງຂານ ແລະອາເນນຊາພິສັງຂານ ຍ້ອນກໍາຈັດອະວິດຊາໄດ້ ຍ້ອນມີວິດຊາເກີດຂຶ້ນ ເມື່ອບໍ່ປຸງແຕ່ງ ບໍ່ຈົ່ງໃຈ ກໍບໍ່ຖືໝັ້ນອັນໃດ ໆ ໃນໂລກ ເມື່ອບໍ່ຖືໝັ້ນ ກໍບໍ່ສະດຸ້ງຍ້ານ ເມື່ອບໍ່ສະດຸ້ງຍ້ານ ກໍປະຣິນິບພານສະເພາະຕົນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ຖ້າພິກຂຸນັ້ນ ສະເຫວີຍສຸກຂະເວທະນາ ກໍຮູ້ແຈ້ງວ່າ ສຸກຂະເວທະນານັ້ນບໍ່ທ່ຽງ ຮູ້ແຈ້ງວ່າ ບໍ່ໜ້າໝົກມຸ້ນ ຮູ້ແຈ້ງວ່າ ບໍ່ໜ້າເພີດເພີນ ຖ້າທ່ານສະເຫວີຍທຸກຂະເວທະນາ ກໍຮູ້ແຈ້ງວ່າທຸກຂະເວທະນານັ້ນ ບໍ່ທ່ຽງ ຮູ້ແຈ້ງວ່າ ບໍ່ໜ້າໝົກມຸ້ນ ຮູ້ແຈ້ງວ່າ ບໍ່ໜ້າເພີດເພີນ ຖ້າທ່ານສະເຫວີຍ ອະທຸກຂະມະສຸກຂະເວທະນາ ກໍຮູ້ແຈ້ງວ່າ ອະທຸກຂະມະສຸກຂະເວທະນານັ້ນບໍ່ທ່ຽງ ຮູ້ແຈ້ງວ່າ ບໍ່ໜ້າໝົກມຸ້ນ ຮູ້ແຈ້ງວ່າ ບໍ່ໜ້າເພີດເພີນ ຖ້າທ່ານສະເຫວີຍສຸກຂະເວທະນາ ກໍເປັນຜູ້ປາສະຈາກ (ກິເລດ) ສະເຫວີຍ ສຸກຂະເວທະນານັ້ນ ຖ້າທ່ານສະເຫວີຍທຸກຂະເວທະນາ ກໍເປັນຜູ້ປາສະຈາກ (ກິເລດ) ສະເຫວີຍທຸກຂະເວທະນານັ້ນ ຖ້າທ່ານສະເຫວີຍອະທຸກຂະມະສຸກຂະເວທະນາ ກໍເປັນຜູ້ປາສະຈາກ (ກິເລດ) ສະເຫວີຍອະທຸກຂະມະສຸກຂະເວທະນານັ້ນ

ພິກຂຸນັ້ນ ເມື່ອສະເຫວີຍເວທະນາມີກາຍເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາທີ່ມີກາຍເປັນບ່ອນສຸດ ເມື່ອສະເຫວີຍເວທະນາທີ່ມີຊີວິດເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາທີ່ມີຊີວິດ ເປັນບ່ອນສຸດ ຮູ້ແຈ້ງວ່າ ຫຼັງຈາກຕາຍແລ້ວ ການສະເຫວີຍອາລົມທັງໝົດບໍ່ໜ້າເພີດເພີນ ຈັກເຢັນ ຈັກເຫຼືອຢູ່ພຽງສະຣີຣະທາດໃນໂລກນີ້ທີ່ນັ້ນ

ປຽບຄື ບຸຣຸດຍົກໝໍ້ທີ່ຮ້ອນອອກຈາກເຕົາເຜົາໝໍ້ ວາງເທິງພື້ນທີ່ພຽງ ອາຍອຸ່ນໃນໝໍ້ນັ້ນຈັກຫາຍໄປ ເຫຼືອຢູ່ພຽງໝໍ້ທີ່ນັ້ນ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ພິກຂຸເມື່ອສະເຫວີຍເວທະນາທີ່ມີກາຍເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາທີ່ມີກາຍເປັນບ່ອນສຸດ ເມື່ອສະເຫວີຍເວທະນາທີ່ມີຊີວິດເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາທີ່ມີຊີວິດເປັນບ່ອນສຸດ ຮູ້ແຈ້ງວ່າ ຫຼັງຈາກຕາຍແລ້ວ ການສະເຫວີຍອາລົມທັງໝົດ ບໍ່ໜ້າເພີດເພີນ ຈັກເຢັນ ຈັກເຫຼືອຢູ່ພຽງສະຣີຣະທາດໃນໂລກນີ້ທີ່ນັ້ນ

ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ພິກຂຸຜູ້ຂີນາສົບເພິ່ງປຸງແຕ່ງປຸນຍາພິສັງຂານ ອະປຸນຍາພິສັງຂານ ອາເນນຊາພິສັງຂານແດ່ບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອີກຢ່າງໜຶ່ງ ເມື່ອສັງຂານທັງຫຼາຍ ບໍ່ມີໂດຍປະການທັງປວງ ຍ້ອນສັງຂານດັບ ວິນຍານເພິ່ງຜາກົດບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອີກຢ່າງໜຶ່ງ ເມື່ອວິນຍານບໍ່ມີ ຯລຯ ຍ້ອນວິນຍານດັບ ນາມຮູບເພິ່ງຜາກົດບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອີກຢ່າງໜຶ່ງ ເມື່ອນາມຮູບບໍ່ມີ ຯລຯ ຍ້ອນນາມຮູບດັບ ສະລາຍະຕະນະເພິ່ງຜາກົດບໍ?

ບໍ່ແມ່ນແນວນັ້ນຂ້ານ້ອຍ

ອີກຢ່າງໜຶ່ງ ເມື່ອສະລາຍະຕະນະບໍ່ມີ ຯລຯ ຍ້ອນສະລາຍະຕະນະດັບ ຜັດສະເພິ່ງຜາກົດບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອີກຢ່າງໜຶ່ງ ເມື່ອຜັດສະບໍ່ມີ ຯລຯ ຍ້ອນຜັດສະດັບ ເວທະນາເພິ່ງຜາກົດບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອີກຢ່າງໜຶ່ງ ເມື່ອເວທະນາບໍ່ມີ ຯລຯ ຍ້ອນເວທະນາດັບ ຕັນຫາເພິ່ງຜາກົດບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອີກຢ່າງໜຶ່ງ ເມື່ອຕັນຫາບໍ່ມີ ຯລຯ ຍ້ອນຕັນຫາດັບ ອຸປາທານເພິ່ງຜາກົດບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອີກຢ່າງໜຶ່ງ ເມື່ອອຸປາທານບໍ່ມີ ຯລຯ ຍ້ອນອຸປາທານດັບ ພົບເພິ່ງຜາກົດບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອີກຢ່າງໜຶ່ງ ເມື່ອພົບບໍ່ມີ ຯລຯ ຍ້ອນພົບດັບ ຊາດເພິ່ງຜາກົດບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອີກຢ່າງໜຶ່ງ ເມື່ອຊາດບໍ່ມີ ຯລຯ ຍ້ອນຊາດດັບ ຊະຣາແລະມໍລະນະເພິ່ງຜາກົດບໍ?

ບໍ່ແມ່ນແນວນັ້ນຂ້ານ້ອຍ

ດີແລ້ວ ດີແລ້ວ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງໃຫ້ສຳຄັນ ຈົ່ງນ້ອມໃຈພິຈາຣະນາຂໍ້ຄວາມທັງຫຼາຍນັ້ນ ໄວ້ແນວນັ້ນ ຈົ່ງປະຕິບັດໃຫ້ຮູ້ແຈ້ງໃນຂໍ້ນັ້ນ ໆ ເທີ້ນ ນັ້ນແລ ເປັນບ່ອນສຸດແຫ່ງທຸກ

**ປະຣິວິມັງສະນະສູດທີ ໑ ຈົບ**

# ៨. ອຸປາທານສູດ
## ວ່າດ້ວຍຄວາມຍຶດໝັ້ນຖືໝັ້ນ

[៥៨] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳທັງຫຼາຍ ທີ່ເປັນປັດໄຈແຫ່ງອຸປາທານ ຕັນຫາຍ່ອມຈະເລີນ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງມີ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ປຽບຄື ກອງໄຟໃຫຍ່ທີ່ສຸມດ້ວຍໄມ້ ໑໐ ເຫຼັ້ມກວຽນແດ່ ២໐ ເຫຼັ້ມກວຽນແດ່ ៣໐ ເຫຼັ້ມກວຽນແດ່ ៤໐ ເຫຼັ້ມກວຽນແດ່ ລຸກຮຸ່ງຢູ່ ບຸຣຸດໃສ່ຫຍ້າແຫ້ງ ມູນງົວແຫ້ງແລະໄມ້ແຫ້ງເຂົ້າໄປໃນກອງໄຟນັ້ນ ທຸກ ໆ ໄລຍະ ກໍເມື່ອເປັນແນວນີ້ ກອງໄຟໃຫຍ່ນັ້ນ ໄດ້ອາຫານແນວນັ້ນ ໄດ້ເຊື້ອແນວນັ້ນ ເພິ່ງລຸກຮຸ່ງແຈ້ງໄດ້ຕະຫຼອດການລະນານ ອຸປະມານີ້ສັນໃດ ອຸປະໄມ ກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງອຸປາທານ ຕັນຫາຍ່ອມຈະເລີນ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ເມື່ອພິກຂຸພິຈາລະນາເຫັນໂທດຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງອຸປາທານ ຕັນຫາຍ່ອມດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຍ້ອນພົບດັບ ຊາດຈຶ່ງດັບ ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ປຽບຄື ກອງໄຟໃຫຍ່ທີ່ສຸມດ້ວຍໄມ້ ໑໐ ເຫຼັ້ມກວຽນແດ່ ២໐ ເຫຼັ້ມກວຽນແດ່ ៣໐ ເຫຼັ້ມກວຽນແດ່ ៤໐ ເຫຼັ້ມກວຽນແດ່ ລຸກຮຸ່ງຢູ່ ບຸຣຸດບໍ່ໃສ່ຫຍ້າແຫ້ງ ມູນງົວແຫ້ງແລະໄມ້ແຫ້ງເຂົ້າໄປໃນກອງໄຟນັ້ນທຸກ ໆ ໄລຍະ ກໍເມື່ອເປັນແນວ ນີ້ ກອງໄຟໃຫຍ່ນັ້ນ ບໍ່ໄດ້ອາຫານແນວນັ້ນ ບໍ່ໄດ້ເຊື້ອແນວນັ້ນ ເພິ່ງດັບໄປ ຍ້ອນສິ້ນເຊື້ອເກົ່າ ແລະ ບໍ່ຕື່ມເຊື້ອໃໝ່ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນໂທດຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງອຸປາທານ ຕັນຫາຍ່ອມດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

**ອຸປາທານສູດທີ ៨ ຈົບ**

# ໑. ສັງໂຍຊະນະສູດ
## ວ່າດ້ວຍສັງໂຍດ

[໕໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງສັງໂຍດ ຕັນຫາຍ່ອມຈະເລີນ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງມີ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ປຽບຄື ປະທີບນ້ຳມັນທີ່ຕິດໄຟໄດ້ ກໍຍ້ອນອາໄສນ້ຳມັນແລະໄສ້ ບຸຣຸດຕື່ມນ້ຳມັນແລະໃສ່ໄສ້ໃນປະທີບນ້ຳມັນນັ້ນທຸກ ໆ ໄລຍະ ເມື່ອເປັນແນວ ນີ້ ປະທີບນ້ຳມັນນັ້ນ ໄດ້ອາຫານແນວນັ້ນໄດ້ເຊື້ອແນວນັ້ນ ເພິ່ງລຸກຮຸ່ງແຈ້ງຢູ່ໄດ້ຕະຫຼອດການລະນານ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງສັງໂຍດ ຕັນຫາຍ່ອມຈະເລີນ ຄືກັນສັນນັ້ນ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍລະ ນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງມີ ຄວາມເກີດຂຶ້ນ ແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ເມື່ອພິກຂຸພິຈາລະນາເຫັນໂທດຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງສັງໂຍດ ຕັນຫາຍ່ອມດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຍ້ອນພົບດັບ ຊາດຈຶ່ງດັບ ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ປຽບຄື ປະທີບນ້ຳມັນເພິ່ງຕິດໄຟໄດ້ ກໍຍ້ອນອາໄສນ້ຳມັນແລະໄສ້ ບຸຣຸດບໍ່ຕື່ມນ້ຳມັນ ແລະ ບໍ່ໃສ່ໄສ້ໃນປະທີບນ້ຳມັນນັ້ນທຸກ ໆ ໄລຍະ ເມື່ອເປັນແນວນີ້ ປະທີບນ້ຳມັນນັ້ນບໍ່ໄດ້ອາຫານແນວນັ້ນ ບໍ່ໄດ້ເຊື້ອແນວນັ້ນ ເພິ່ງດັບໄປ ຍ້ອນໝົດເຊື້ອເກົ່າແລະບໍ່ຕື່ມເຊື້ອໃໝ່ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນໂທດຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງສັງໂຍດ ຕັນຫາຍ່ອມດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

**ສັງໂຍຊະນະສູດທີ ໑ ຈົບ**

# ໔. ທຸຕິຍະສັງໂຍຊະນະສູດ

## ວ່າດ້ວຍສັງໂຍດ ສູດທີ ໔

[໕໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຽບຄື ປະທີບນ້ຳມັນເພິ່ງຕິດໄຟໄດ້ ກໍຍ້ອນອາໄສນ້ຳມັນແລະໄສ້ ບຸຣຸດຕື່ມນ້ຳມັນແລະໃສ່ໄສ້ໃນປະທີບນ້ຳມັນນັ້ນທຸກ ໆ ໄລຍະ ເມື່ອເປັນແນວນີ້ ປະທີບນ້ຳມັນນັ້ນ ໄດ້ອາຫານແນວນັ້ນ ໄດ້ເຊື້ອແນວນັ້ນ ເພິ່ງລຸກຮຸ່ງແຈ້ງຢູ່ໄດ້ຕະຫຼອດການລະນານ

ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳ ທີ່ເປັນປັດໄຈແຫ່ງສັງໂຍດ ຕັນຫາຍ່ອມຈະເລີນ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ປຽບຄື ປະທີບນ້ຳມັນເພິ່ງຕິດໄຟໄດ້ ກໍຍ້ອນອາໄສນ້ຳມັນແລະໄສ້ ບຸຣຸດບໍ່ຕື່ມນ້ຳມັນແລະບໍ່ໃສ່ໄສ້ໃນປະທີບນ້ຳມັນນັ້ນທຸກ ໆ ໄລຍະ ເມື່ອເປັນແນວນີ້ ປະທີບນ້ຳມັນນັ້ນບໍ່ໄດ້ອາຫານແນວນັ້ນ ບໍ່ໄດ້ເຊື້ອແນວນັ້ນ ເພິ່ງດັບໄປ ຍ້ອນໝົດເຊື້ອເກົ່າ ແລະ ບໍ່ຕື່ມເຊື້ອໃໝ່ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນໂທດຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງສັງໂຍດ ຕັນຫາຍ່ອມດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

**ທຸຕິຍະສັງໂຍຊະນະສູດທີ ໔ ຈົບ**

# ໕. ມະຫາຣຸກຂະສູດ

## ວ່າດ້ວຍຕົ້ນໄມ້ໃຫຍ່

[໕໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງອຸປາທານ ຕັນຫາຍ່ອມຈະເລີນ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ປຽບຄື ຕົ້ນໄມ້ໃຫຍ່ມີຮາກຢັ່ງລົງ ແລະ ແຜ່ຂະຫຍາຍໄປຮອບ ໆ ຮາກທັງໝົດນັ້ນ ຍ່ອມດູດອາຫານຂຶ້ນໄປຂ້າງເທິງ ເມື່ອເປັນແນວນີ້ ຕົ້ນໄມ້ໃຫຍ່ນັ້ນໄດ້ອາຫານແນວນັ້ນ ໄດ້ສານແນວນັ້ນ ເພິ່ງຢືນຕົ້ນຢູ່ໄດ້ຕະຫຼອດການລະນານ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳທັງຫຼາຍ ທີ່ເປັນປັດໄຈແຫ່ງອຸປາທານ ຕັນຫາຍ່ອມຈະເລີນ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ເມື່ອພິກຂຸພິຈາລະນາເຫັນໂທດຢູ່ສະເໝີ ໆ ໃນທຳທັງຫຼາຍ ທີ່ເປັນປັດໄຈແຫ່ງອຸປາທານ ຕັນຫາຍ່ອມດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ປຽບຄື ຕົ້ນໄມ້ໃຫຍ່ (ຢືນຕົ້ນຢູ່ຢ່າງນັ້ນ) ໃນເວລານັ້ນ ມີບຸຣຸດຖື ຈົກແລະກະຕ່າຍ່າງມາ ຕັດຕົ້ນໄມ້ທີ່ເຫງົ້າຕົ້ນແລ້ວ ຂຸດລົງໄປ ເມື່ອຂຸດລົງໄປແລ້ວ ກໍລຶກຮາກໃຫຍ່ນ້ອຍ ໂດຍບ່ອນສຸດແມ່ນທໍ່ກ້ານຫຍ້າແຝກຂຶ້ນ ບຸຣຸດນັ້ນ ເພິ່ງຕັດຕົ້ນໄມ້ນັ້ນເປັນທ່ອນນ້ອຍທ່ອນໃຫຍ່ ແລ້ວເພິ່ງຜ່າອອກ ເມື່ອຜ່າແລ້ວ ເຮັດໃຫ້ເປັນຕ່ອນເລັກຕ່ອນນ້ອຍແລ້ວເຂ່ຍ ຕາກລົມ ຕາກແດດ ເມື່ອຕາກລົມ ຕາກແດດແລ້ວ ເອົາໄຟເຜົາ ເມື່ອເອົາໄຟເຜົາແລ້ວ ເຮັດໃຫ້ເປັນຂີ້ ເມື່ອເຮັດໃຫ້ເປັນຂີ້ແລ້ວ ເພິ່ງໂຮຍໃສ່ລົມແຮງ ຫຼື ລອຍໃນແມ່ນ້ຳທີ່ມີແລວນ້ຳໄຫຼແຮງ ເມື່ອເປັນແນວນີ້ ຕົ້ນໄມ້ໃຫຍ່ນັ້ນ ເມື່ອຖືກຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນໂທດຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງອຸປາທານ ຕັນຫາຍ່ອມດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

**ມະຫາຣຸກຂະສູດທີ່ ໕ ຈົບ**

# ໖. ທຸຕິຍະມະຫາຣຸກຂະສູດ

## ວ່າດ້ວຍຕົ້ນໄມ້ໃຫຍ່ ສູດທີ່ ໒

[໕໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຽບຄື ຕົ້ນໄມ້ໃຫຍ່ມີຮາກຢັ່ງລົງ ແລະ ແຜ່ຂະຫຍາຍໄປຮອບ ໆ ຮາກທັງໝົດນັ້ນ ຍ່ອມດູດອາຫານຂຶ້ນໄປຂ້າງເທິງ ເມື່ອເປັນແນວນີ້ ຕົ້ນໄມ້ໃຫຍ່ນັ້ນໄດ້ອາຫານແນວ

ນັ້ນ ໄດ້ສານແນວນັ້ນ ເພິ່ງຢືນຕົ້ນຢູ່ໄດ້ຕະຫຼອດການລະນານ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈ ແຫ່ງອຸປາທານ ຕັນຫາຍ່ອມຈະເລີນ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ฯລฯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ປຽບຄື ຕົ້ນໄມ້ໃຫຍ່ (ຢືນຕົ້ນຢູ່) ໃນທີ່ນັ້ນ ມີບຸຣຸດຖືຈອບ ແລະ ກະຕ່າຢ່າງມາ ຕັດຕົ້ນໄມ້ທີ່ເຫງົ້າຕົ້ນແລ້ວ ຂຸດລົງໄປ ເມື່ອຂຸດລົງໄປແລ້ວ ກໍລົກຮາກໃຫຍ່ນ້ອຍແມ່ນທໍ່ກ້ານແຝກຂຶ້ນ ฯລฯ ຫຼື ລອຍໃນແມ່ນ້ຳທີ່ມີແລວນ້ຳໄຫຼແຮງ ເມື່ອເປັນຢ່າງນີ້ ຕົ້ນໄມ້ໃຫຍ່ນັ້ນຖືກຕັດຮາກຖອນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນໂທດຢູ່ສະເໝີ ໆ ໃນທຳທັງຫຼາຍ ທີ່ເປັນປັດໄຈແຫ່ງອຸປາທານ ຕັນຫາຍ່ອມດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ฯລฯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

**ທຸຕິຍະມະຫາຣຸກຂະສູດທີ ໖ ຈົບ**

# ໗. ຕະຣຸນະຣຸກຂະສູດ

## ວ່າດ້ວຍຕົ້ນໄມ້ອ່ອນ

[໕໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ฯລฯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ฯລฯ

ພິກຂຸທັງຫຼາຍ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງສັງໂຍດ ຕັນຫາຍ່ອມຈະເລີນ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ฯລฯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ປຽບຄື ຕົ້ນໄມ້ອ່ອນ (ຢືນຕົ້ນຢູ່) ມີບຸຣຸດມາຖະໜອມຮາກຄຸ້ຍເຂ່ຍດິນ ຫົດນ້ຳສະໝ່ຳສະເໝີ ເມື່ອເປັນ ແນວ ນີ້ ຕົ້ນໄມ້ອ່ອນນັ້ນໄດ້ອາຫານແນວນັ້ນ ໄດ້ສານແນວນັ້ນ ເພິ່ງເຖິງຄວາມຈະເລີນງອກງາມໄພບູນ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳທັງຫຼາຍ ທີ່ເປັນປັດໄຈແຫ່ງສັງໂຍດ ຕັນຫາຍ່ອມຈະເລີນ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ฯລฯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ເມື່ອພິກຂຸພິຈາລະນາເຫັນໂທດຢູ່ສະເໝີ ໆ ໃນທຳທັງຫຼາຍ ທີ່ເປັນປັດໄຈແຫ່ງສັງໂຍດ ຕັນຫາຍ່ອມດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ฯລฯ ຄວາມດັບແຫ່ງກອງທຸກ ທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ພິກຂຸທັງຫຼາຍ ປຽບຄື ຕົ້ນໄມ້ອ່ອນ (ຢືນຕົ້ນຢູ່ແນວນັ້ນ) ໃນທີ່ນັ້ນມີບຸຣຸດຖືຈົກແລະກະຕ່າຍ່າງມາ ฯລฯ ຫຼື ລອຍໃນແມ່ນ້ຳທີ່ມີແລວນ້ຳໄຫຼແຮງ ເມື່ອເປັນແນວນີ້ ຕົ້ນໄມ້ອ່ອນນັ້ນຖືກຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນ ໂທດຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງສັງໂຍດ ຕັນຫາຍ່ອມດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ฯລฯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

**ຕະຣຸນະຣຸກຂະສູດທີ ໗ ຈົບ**

# ໘. ນາມຣູບສູດ

## ວ່າດ້ວຍນາມຣູບ

[໕໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ฯລฯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ฯລฯ

ພິກຂຸທັງຫຼາຍ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງສັງໂຍດ ນາມຣູບຍ່ອມຢັ່ງລົງ ຍ້ອນນາມຣູບເປັນປັດໄຈ ສະລາຍະຕະນະຈຶ່ງມີ ฯລฯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ປຽບຄື ຕົ້ນໄມ້ໃຫຍ່ມີຮາກຢັ່ງລົງ ແລະ ແຜ່ຂະຫຍາຍໄປຮອບ ໆ ຮາກທັງໝົດນັ້ນຍ່ອມດູດອາຫານຂຶ້ນໄປຂ້າງເທິງ ເມື່ອເປັນແນວນີ້ ຕົ້ນໄມ້ໃຫຍ່ນັ້ນ ໄດ້ອາຫານແນວນັ້ນ ໄດ້ສານແນວນັ້ນ ເພິ່ງຢືນຕົ້ນຢູ່ໄດ້ຕະຫຼອດການລະນານ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳທັງຫຼາຍ ທີ່ເປັນປັດໄຈແຫ່ງສັງໂຍດ ນາມຣູບຍ່ອມຢັ່ງລົງ ຍ້ອນນາມຣູບເປັນປັດໄຈ ສະລາຍະຕະນະຈຶ່ງມີ ฯລฯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ເມື່ອພິກຂຸພິຈາລະນາເຫັນໂທດຢູ່ສະເໝີ ໆ ໃນທຳທັງຫຼາຍ ທີ່ເປັນປັດໄຈແຫ່ງສັງໂຍດ ນາມຣູບຍ່ອມບໍ່ຢັ່ງລົງ ຍ້ອນນາມຣູບດັບ ສະລາຍະຕະນະຈຶ່ງດັບ ฯລฯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ປຽບຄື ຕົ້ນໄມ້ໃຫຍ່ (ຢືນຕົ້ນຢູ່ແນວນັ້ນ) ທີ່ນັ້ນບຸຣຸດຖືຈົກ ແລະ ກະຕ່າ ຍ່າງມາ ຯລຯ ເກີດຂຶ້ນຕໍ່ໄປບໍ່ໄດ້ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາ ເຫັນໂທດຢູ່ສະເໝີ ໆ ໃນທໍາທັງຫຼາຍ ທີ່ເປັນປັດໄຈແຫ່ງສັງໂຍດ ນາມຣູບຍ່ອມບໍ່ຢັ່ງລົງ ຍ້ອນ ນາມຣູບດັບ ສະລາຍະຕະນະຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະ ການຢ່າງນີ້

**ນາມຣູບສູດທີ ໘ ຈົບ**

## ໙. ວິນຍານສູດ

### ວ່າດ້ວຍວິນຍານ

[໕໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທໍາທັງຫຼາຍທີ່ເປັນ ປັດໄຈແຫ່ງສັງໂຍດ ວິນຍານຍ່ອມຢັ່ງລົງ ຍ້ອນວິນຍານເປັນປັດໄຈ ນາມຣູບຈຶ່ງມີ ຯລຯ ຄວາມ ເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ປຽບຄື ຕົ້ນໄມ້ໃຫຍ່ມີຮາກຢັ່ງລົງແລະແຜ່ຂະຫຍາຍໄປຮອບ ໆ ຯລຯ ອຸປະມານີ້ ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທໍາທັງຫຼາຍທີ່ເປັນປັດໄຈ ແຫ່ງສັງໂຍດ ວິນຍານຍ່ອມຢັ່ງລົງ ຍ້ອນວິນຍານເປັນປັດໄຈ ນາມຣູບ ຈຶ່ງມີ ຯລຯ ຄວາມເກີດ ຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ເມື່ອພິກຂຸພິຈາລະນາເຫັນໂທດຢູ່ສະເໝີ ໆ ໃນທໍາທັງຫຼາຍ ທີ່ເປັນປັດໄຈແຫ່ງສັງໂຍດ ວິນຍານຍ່ອມບໍ່ຢັ່ງລົງ ຍ້ອນວິນຍານດັບ ນາມຣູບຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນ ນີ້ ມີໄດ້ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ປຽບຄືຕົ້ນໄມ້ໃຫຍ່ (ຢືນຕົ້ນຢູ່ແນວນັ້ນ) ໃນທີ່ນັ້ນ ມີບຸຣຸດຖືຈົກ ແລະກະ ຕ່າຍ່າງມາ ຯລຯ ເກີດຂຶ້ນຕໍ່ບໍ່ໄດ້ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາ ເຫັນໂທດຢູ່ສະເໝີ ໆ ໃນທໍາທັງຫຼາຍທີ່ເປັນປັດໄຈແຫ່ງສັງໂຍດ ວິນຍານຍ່ອມບໍ່ຢັ່ງລົງ ຍ້ອນ ວິນຍານດັບ ນາມຣູບຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

**ວິນຍານສູດທີ ໙ ຈົບ**

# ໑໐. ນິທານສູດ

## ວ່າດ້ວຍທຳທີ່ເປັນຕົ້ນເຫດ

[໖໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ນິຄົມຂອງຊາວກຸຣຸ ຊື່ວ່າ ກຳມາດທຳມະ ແຄວັ້ນກຸຣຸ

ຄັ້ງນັ້ນ ທ່ານພຣະອານົນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ປະຕິດຈະສະມຸບບາດນີ້ເປັນທຳເລິກເຊິ່ງ ແຕ່ເຖິງແນວນັ້ນ ກໍຜາກົດແກ່ຂ້າພຣະອົງ ຄື ກັບວ່າເປັນທຳງ່າຍ ໆ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ຢ່າເວົ້າແນວນັ້ນ ອານົນ ຢ່າເວົ້າແນວນັ້ນ ປະຕິດຈະສະມຸບບາດນີ້ ເປັນທຳເລິກເຊິ່ງ ສຸດຈະຄາດຄະເນໄດ້ ກໍຍ້ອນບໍ່ຮູ້ ບໍ່ເຂົ້າໃຈ ບໍ່ບັນລຸທຳນີ້ ໝູ່ສັດຈຶ່ງຫຍຸ້ງ ຄືກໍ້ຝ້າຍຂອງຊ່າງຫູກ ເປັນຂອດນຸງນັງຄື ກໍ້ຝ້າຍ ຄື ຫຍ້າມຸ້ງກະຕ່າຍແລະຫຍ້າປ້ອງ ບໍ່ຂ້າມພົ້ນອະບາຍ ທຸກຄະຕິ ວິນິບາດ ສົງສານ

ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງອຸປາທານ ຕັນຫາຍ່ອມຈະເລີນ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຍ້ອນອຸປາທານ ເປັນປັດໄຈພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງມີ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ປຽບຄື ຕົ້ນໄມ້ໃຫຍ່ມີຮາກຢັ່ງລົງ ແລະ ແຜ່ຂະຫຍາຍໄປຮອບ ໆ ຮາກທັງໝົດນັ້ນດູດອາຫານຂຶ້ນໄປຂ້າງເທິງ ເມື່ອເປັນແນວນີ້ ຕົ້ນໄມ້ໃຫຍ່ນັ້ນໄດ້ອາຫານແນວນັ້ນ ໄດ້ສານແນວນັ້ນເພິ່ງຢືນຕົ້ນຢູ່ໄດ້ຕະຫຼອດການລະນານ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນຄວາມພໍໃຈຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງອຸປາທານ ຕັນຫາຍ່ອມຈະເລີນຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ฯລฯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ເມື່ອພິກຂຸ ພິຈາລະນາເຫັນໂທດຢູ່ສະເໝີ ໆ ໃນທຳທັງຫຼາຍ ທີ່ເປັນປັດໄຈແຫ່ງອຸປາທານຕັນຫາຍ່ອມດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ฯລฯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ປຽບຄື ຕົ້ນໄມ້ໃຫຍ່ (ຢືນຕົ້ນຢູ່ແນວນັ້ນ) ໃນທີ່ນັ້ນ ມີບຸຣຸດຖືຈົກແລະກະຕ່າຍ່າງມາ ຕັດຕົ້ນໄມ້ນັ້ນທີ່ເຫງົ້າຕົ້ນແລ້ວ ຂຸດລົງໄປ ເມື່ອຂຸດລົງໄປແລ້ວ ກໍດຶງຮາກໃຫຍ່ນ້ອຍໂດຍບ່ອນສຸດແມ່ນທໍ່ກ້ານຫຍ້າແຝກຂຶ້ນ ບຸຣຸດນັ້ນ ເພິ່ງຕັດຕົ້ນໄມ້ນັ້ນເປັນທ່ອນນ້ອຍທ່ອນໃຫຍ່ ເມື່ອຕັດຕົ້ນໄມ້ນັ້ນເປັນທ່ອນນ້ອຍທ່ອນໃຫຍ່ແລ້ວເພິ່ງຜ່າອອກ ເມື່ອຜ່າແລ້ວ ເຮັດໃຫ້ເປັນຕ່ອນເລັກຕ່ອນນ້ອຍແລ້ວເຂ່ຍ ຕາກລົມ ຕາກແດດ ເມື່ອຕາກລົມ ຕາກແດດແລ້ວ ເອົາໄຟເຜົາ ເມື່ອເອົາໄຟເຜົາແລ້ວ ເຮັດໃຫ້ເປັນຂີ້ ເມື່ອເຮັດໃຫ້ເປັນຂີ້ແລ້ວ ເພິ່ງໂຮຍໃສ່ລົມແຮງ ຫຼື ລອຍໃນແມ່ນ້ຳທີ່ມີກະແສຊ່ຽວ ເມື່ອເປັນແນວ ນີ້ ຕົ້ນໄມ້ໃຫຍ່ນັ້ນຖືກຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອພິກຂຸພິຈາລະນາເຫັນໂທດຢູ່ສະເໝີ ໆ ໃນທຳທັງຫຼາຍທີ່ເປັນປັດໄຈແຫ່ງອຸປາທານຕັນຫາຍ່ອມດັບ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຍ້ອນພົບດັບຊາດຈຶ່ງດັບ ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

**ນິທານສູດທີ່ ໑໐ ຈົບ**

**ທຸກຂະວັກທີ່ ໖ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຣິວີມັງສະນະສູດ
໒. ສັງໂຍຊະນະສູດ
໓. ມະຫາຣຸກຂະສູດ
໔. ຕະຣຸນະຣຸກຂະສູດ
໕. ວິນຍານສູດ
໖. ອຸປາທານສູດ
໗. ທຸຕິຍະສັງໂຍຊະນະສູດ
໘. ທຸຕິຍະມະຫາຣຸກຂະສູດ
໙. ນາມະຣູບສູດ
໑໐. ນິທານສູດ

# ກ. ມະຫາວັກ

## ໝວດວ່າດ້ວຍພຣະສູດທີ່ມີເນື້ອຫາສຳຄັນ

# ໑. ອັດສຸຕະວາສູດ

## ວ່າດ້ວຍຜູ້ບໍ່ໄດ້ສະດັບ

[໖໑] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບ ເພິ່ງເບື່ອໜ່າຍແດ່ ຄາຍກຳໜັດແດ່ ລຸດພົ້ນແດ່ ຈາກກາຍເຊິ່ງເປັນທີ່ປະຊຸມແຫ່ງມະຫາພູຕະທັງ ໔ ນີ້ ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນເຫດທີ່ການປະຊຸມກໍດີ ຄວາມສິ້ນໄປກໍດີ ການຍຶດຖືກໍດີ ການປະຖິ້ມກາຍເຊິ່ງເປັນທີ່ປະຊຸມແຫ່ງມະຫາພູຕະທັງ ໔ ນີ້ກໍດີ ຍ່ອມຜາກົດ ຍ້ອນແນວນັ້ນ ປຸຖຸຊົນຜູ້ບໍ່ໄດ້ສະດັບເພິ່ງເບື່ອໜ່າຍແດ່ ຄາຍກຳໜັດແດ່ ລຸດພົ້ນແດ່ ຈາກກາຍນັ້ນ

ຕະຖາຄົດຮຽກສິ່ງນີ້ວ່າ ຈິດແດ່ ມະໂນແດ່ ວິນຍານແດ່ ປຸຖຸຊົນຜູ້ບໍ່ໄດ້ສະດັບ ບໍ່ອາດເບື່ອໜ່າຍ ຄາຍກຳໜັດ ລຸດພົ້ນໄປຈາກຈິດເປັນຕົ້ນນັ້ນໄດ້ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນຈິດເປັນຕົ້ນນີ້ ຖືກຮັດໄວ້ດ້ວຍຕັນຫາ ຍຶດຖືວ່າເປັນຂອງເຮົາ ເປັນສິ່ງທີ່ປຸຖຸຊົນ ຜູ້ບໍ່ໄດ້ສະດັບຍຶດໝັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ ຕະຫຼອດການລະນານ ຍ້ອນແນວນັ້ນ ປຸຖຸຊົນຜູ້ບໍ່ໄດ້ສະດັບ ຈຶ່ງບໍ່ອາດເບື່ອໜ່າຍ ຄາຍກຳໜັດ ລຸດພົ້ນໄປຈາກຈິດເປັນຕົ້ນນັ້ນໄດ້

ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບ ເພິ່ງຍຶດຖືກາຍເຊິ່ງເປັນທີ່ປະຊຸມແຫ່ງມະຫາພູຕະທັງ ໔ ນີ້ ໂດຍຄວາມເປັນອັດຕາຍັງປະເສີດກວ່າ ສ່ວນການຍຶດຖືຈິດໂດຍຄວາມເປັນອັດຕາ ບໍ່ປະເສີດເລີຍ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນກາຍເຊິ່ງເປັນທີ່ປະຊຸມແຫ່ງມະຫາພູຕະທັງ ໔ ນີ້ ເມື່ອດຳລົງຢູ່ ໑ ປີແດ່ ໒ ປີແດ່ ໓ ປີແດ່ ໔ ປີແດ່ ໕ ປີແດ່ ໑໐ ປີແດ່ ໒໐ ປີແດ່ ໓໐ ປີແດ່ ໔໐ ປີແດ່ ໕໐ ປີແດ່ ໑໐໐ ປີແດ່ ຫຼືເກີນກວ່າແດ່ ກໍຍັງຜາກົດ

ຕະຖາຄົດຮຽກສິ່ງນີ້ວ່າ ຈິດແດ່ ມະໂນແດ່ ວິນຍານແດ່ ຈິດເປັນຕົ້ນນັ້ນ ດວງໜຶ່ງເກີດຂຶ້ນ ດວງໜຶ່ງດັບໄປຕະຫຼອດທັງຄືນແລະມື້ ປຽບຄື ລີງເມື່ອທ່ຽວໄປໃນປ່ານ້ອຍ ແລະ ປ່າໃຫຍ່ ຈັບງ່າໄມ້ ປ່ອຍງ່າໄມ້ນັ້ນແລ້ວ ຍ່ອມຈັບງ່າອື່ນ ປ່ອຍງ່ານັ້ນແລ້ວຍ່ອມຈັບງ່າອື່ນຕໍ່ໄປ ສັນນັ້ນ ຕະຖາຄົດຈຶ່ງຮຽກສິ່ງນີ້ວ່າ ຈິດແດ່ ມະໂນແດ່ ວິນຍານແດ່ ຈິດເປັນຕົ້ນນັ້ນ ດວງໜຶ່ງເກີດຂຶ້ນ ດວງໜຶ່ງດັບໄປຕະຫຼອດທັງຄືນແລະມື້

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບ ຍ່ອມມະນະສິການປະຕິດຈະສະມຸບບາດນັ້ນ ແລໂດຍແຍບຄາຍ ໃນກາຍແລະຈິດນັ້ນວ່າ ຍ້ອນເຫດນີ້ ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ ຍ້ອນສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ ຍ້ອນສິ່ງນີ້ດັບ ສິ່ງນີ້ຈຶ່ງດັບ ຄື ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ຯລຯ ຄວາມດັບກອງແຫ່ງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ແມ່ນໃນເວທະນາ ແມ່ນໃນສັນຍາ ແມ່ນໃນສັງຂານ ແມ່ນໃນວິນຍານ ເມື່ອເບື່ອໜ່າຍ ຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດຈຶ່ງລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນ ເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດສຸຕະວາສູດທີ ໑ ຈົບ**

# ໘. ທຸຕິຍະອັດສຸຕະວາສູດ

## ວ່າດ້ວຍຜູ້ບໍ່ໄດ້ສະດັບ ສູດທີ ໘

[໖໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບ ເພິ່ງເບື່ອໜ່າຍແດ່ ຄາຍກຳໜັດແດ່ ລຸດພົ້ນແດ່ ຈາກກາຍເຊິ່ງເປັນທີ່ປະຊຸມແຫ່ງມະຫາພູຕະທັງ ໔ ນີ້ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນເຫດທີ່ການປະຊຸມກໍດີ ຄວາມສິ້ນໄປກໍດີ ການຍຶດຖືກໍດີ ການປະຖິ້ມກາຍເຊິ່ງເປັນທີ່ປະຊຸມແຫ່ງມະຫາພູຕະທັງ ໔ ນີ້ກໍດີ ຍ່ອມຜາກົດ ຍ້ອນແນວນັ້ນ ປຸຖຸຊົນຜູ້ບໍ່ໄດ້ສະດັບ ເພິ່ງເບື່ອໜ່າຍແດ່ ຄາຍກຳໜັດແດ່ ລຸດພົ້ນແດ່ຈາກກາຍນັ້ນ

ຕະຖາຄົດຮຽກສິ່ງນີ້ວ່າ ຈິດແດ່ ມະໂນແດ່ ວິນຍານແດ່ ປຸຖຸຊົນຜູ້ບໍ່ໄດ້ສະດັບບໍ່ອາດເບື່ອໜ່າຍ ຄາຍກຳໜັດ ລຸດພົ້ນໄປຈາກຈິດເປັນຕົ້ນນັ້ນໄດ້ ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຈິດເປັນຕົ້ນນີ້ ຖືກຮັດໄວ້ດ້ວຍຕັນຫາ ຍຶດຖືວ່າເປັນຂອງເຮົາ ເປັນສິ່ງທີ່ປຸຖຸຊົນ ຜູ້ບໍ່ໄດ້ສະດັບຍຶດໝັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ ຕະຫຼອດການລະນານ ຍ້ອນແນວນັ້ນ ປຸຖຸຊົນຜູ້ບໍ່ໄດ້ສະດັບ ຈຶ່ງບໍ່ອາດເບື່ອໜ່າຍ ຄາຍກຳໜັດ ລຸດພົ້ນໄປຈາກຈິດເປັນຕົ້ນນັ້ນໄດ້

ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບ ເພິ່ງຍຶດຖືກາຍເຊິ່ງເປັນທີ່ປະຊຸມແຫ່ງມະຫາພູຕະທັງ ໔ ນີ້ ໂດຍຄວາມເປັນອັດຕາຍັງປະເສີດກວ່າ ສ່ວນການຍຶດຖືຈິດໂດຍຄວາມເປັນອັດຕາບໍ່ປະເສີດເລີຍ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນກາຍເຊິ່ງເປັນທີ່ປະຊຸມມະຫາພູຕະທັງ ໔ ນີ້ ເມື່ອດຳລົງຢູ່ ໑ ປີແດ່ ໒ ປີແດ່ ໓ ປີແດ່ ໔ ປີແດ່ ໕ ປີແດ່ ໑໐ ປີແດ່ ໒໐ ປີແດ່ ໓໐ ປີແດ່ ໔໐ ປີແດ່ ໕໐ ປີແດ່ ໑໐໐ ປີແດ່ ຫຼືເກີນກວ່ານັ້ນແດ່ ກໍຍັງຜາກົດເຫັນໄດ້

ຕະຖາຄົດຮຽກສິ່ງນີ້ວ່າ ຈິດແດ່ ມະໂນແດ່ ວິນຍານແດ່ ຈິດເປັນຕົ້ນນັ້ນ ດວງໜຶ່ງເກີດຂຶ້ນ ດວງໜຶ່ງດັບໄປຕະຫຼອດຄືນແລະມື້

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບ ຍ່ອມມະນະສິການປະຕິດຈະສະມຸບບາດນັ້ນແລໂດຍແຍບຄາຍ ໃນກາຍແລະຈິດນັ້ນວ່າ ຍ້ອນເຫດນີ້ ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ ຍ້ອນສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ ຍ້ອນສິ່ງນີ້ດັບ ສິ່ງນີ້ຈຶ່ງດັບ

ສຸກຂະເວທະນາເກີດຂຶ້ນ ຍ້ອນອາໄສຜັດສະທີ່ເປັນປັດໄຈແຫ່ງສຸກຂະເວທະນາ

ຍ້ອນຜັດສະທີ່ເປັນປັດໄຈແຫ່ງສຸກຂະເວທະນານັ້ນດັບໄປ ສຸກຂະເວທະນາທີ່ເກີດຂຶ້ນຍ້ອນອາໄສຜັດສະທີ່ເປັນປັດໄຈແຫ່ງສຸກຂະເວທະນາ ເຊິ່ງສະເຫວີຍອາລົມອັນເກີດຈາກຜັດສະນັ້ນ ກໍດັບລະງັບໄປ

ທຸກຂະເວທະນາເກີດຂຶ້ນ ຍ້ອນອາໄສຜັດສະທີ່ເປັນປັດໄຈແຫ່ງທຸກຂະເວທະນາ

ຍ້ອນຜັດສະທີ່ເປັນປັດໄຈແຫ່ງທຸກຂະເວທະນານັ້ນດັບໄປ ທຸກຂະເວທະນາທີ່ເກີດຂື້ນຍ້ອນອາໄສຜັດສະທີ່ເປັນປັດໄຈແຫ່ງທຸກຂະເວທະນາ ເຊິ່ງສະເຫວີຍອາລົມອັນເກີດຈາກຜັດສະນັ້ນ ກໍດັບລະງັບໄປ

ອະທຸກຂະມະສຸຂະເວທີນເກີດຂື້ນ ຍ້ອນອາໄສຜັດສະທີ່ເປັນປັດໄຈແຫ່ງອະທຸກຂະມະສຸກຂະເວທະນາ

ຍ້ອນຜັດສະທີ່ເປັນປັດໄຈແຫ່ງອະທຸກຂະມະສຸກຂະເວທະນານັ້ນດັບໄປ ອະທຸກຂະມະສຸກຂະເວທະນາ ທີ່ເກີດຂື້ນຍ້ອນອາໄສຜັດສະທີ່ເປັນປັດໄຈແຫ່ງອະທຸກຂະມະສຸກຂະເວທະນາ ເຊິ່ງສະເຫວີຍອາລົມອັນເກີດຈາກຜັດສະນັ້ນ ກໍດັບລະງັບໄປ

ພິກຂຸທັງຫຼາຍ ຍ້ອນໄມ້ສອງທ່ອນສຽດສີກັນຈຶ່ງເກີດຄວາມຮ້ອນລຸກເປັນໄຟ ແຕ່ຖ້າແຍກໄມ້ສອງທ່ອນນັ້ນອອກຈາກກັນ ຄວາມຮ້ອນທີ່ເກີດຈາກການສຽດສີກັນນັ້ນ ກໍຈະດັບມອດລົງແມ່ນສັນໃດ

ສຸກຂະເວທະນາເກີດຂື້ນ ຍ້ອນອາໄສຜັດສະທີ່ເປັນປັດໄຈແຫ່ງສຸກຂະເວທະນາ

ຍ້ອນຜັດສະທີ່ເປັນປັດໄຈແຫ່ງສຸກຂະເວທະນານັ້ນດັບໄປ ສຸກຂະເວທະນາທີ່ເກີດຂື້ນຍ້ອນອາໄສຜັດສະທີ່ເປັນປັດໄຈແຫ່ງສຸກຂະເວທະນາ ເຊິ່ງສະເຫວີຍອາລົມອັນເກີດຈາກຜັດສະນັ້ນ ກໍດັບລະງັບໄປ

ທຸກຂະເວທະນາເກີດຂື້ນ ຍ້ອນອາໄສຜັດສະທີ່ເປັນປັດໄຈແຫ່ງທຸກຂະເວທະນາ

ຍ້ອນຜັດສະທີ່ເປັນປັດໄຈແຫ່ງທຸກຂະເວທະນານັ້ນແລດັບໄປ ທຸກຂະເວທະນາທີ່ເກີດຂື້ນຍ້ອນອາໄສຜັດສະທີ່ເປັນປັດໄຈແຫ່ງທຸກຂະເວທະນາ ເຊິ່ງສະເຫວີຍອາລົມອັນເກີດຈາກຜັດສະນັ້ນ ກໍດັບລະງັບໄປ

ອະທຸກຂະມະສຸກຂະເວທະນາເກີດຂື້ນ ຍ້ອນອາໄສຜັດສະທີ່ປັດໄຈແຫ່ງອະທຸກຂະມະສຸກຂະເວທະນາ

ຍ້ອນຜັດສະທີ່ເປັນປັດໄຈແຫ່ງອະທຸກຂະມະສຸກຂະເວທະນານັ້ນດັບໄປ ອະທຸກຂະມະສຸກຂະເວທະນາ ທີ່ເກີດຂື້ນຍ້ອນອາໄສຜັດສະທີ່ເປັນປັດໄຈແຫ່ງອະທຸກຂະມະສຸກຂະເວທະນາ ເຊິ່ງສະເຫວີຍອາລົມອັນເກີດຈາກຜັດສະນັ້ນ ກໍດັບລະງັບໄປຄືກັນສັນນັ້ນ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຜັດສະແມ່ນໃນເວທະນາ ແມ່ນໃນສັນຍາ ແມ່ນໃນສັງຂານ ແມ່ນໃນວິນຍານ ເມື່ອເບື່ອໜ່າຍ ຍ່ອມ

ຄາຍກຳໜັດ ຍ້ອນຄາຍກຳໜັດຈຶ່ງລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນ ເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ທຸຕິຍະອັດສຸຕະວາສູດທີ ໘ ຈົບ**

# ໙. ປຸດຕະມັງສະສູດ

## ວ່າດ້ວຍຊີ້ນບຸດ

[໖໓] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ອາຫານ ໔ ຢ່າງນີ້ ເປັນໄປເພື່ອຄວາມດຳລົງຢູ່ຂອງໝູ່ສັດ ຜູ້ເກີດແລ້ວ ຫຼືເພື່ອອະນຸເຄາະໝູ່ສັດຜູ້ສະແຫວງຫາທີ່ເກີດ

ອາຫານ ໔ ແນວ ອັນໃດແດ່ ຄື

໑. ກະວະລິງກາຣາຫານ ທີ່ຫຍາບຫຼືລະອຽດ
໒. ຜັດສາຫານ
໓. ມະໂນສັນເຈຕະນາຫານ
໔. ວິນຍານາຫານ

ອາຫານ ໔ ຢ່າງນີ້ ເປັນໄປເພື່ອຄວາມດຳລົງຢູ່ຂອງໝູ່ສັດຜູ້ເກີດແລ້ວ ຫຼື ເພື່ອອະນຸເຄາະໝູ່ສັດຜູ້ສະແຫວງຫາທີ່ເກີດ

ກະວະລິງກາຣາຫານ ຈະເພິ່ງເຫັນໄດ້ແນວໃດ?

ປຽບຄື ພັນລະແລະຍາສາມີທັງສອງ ຖືເອົາສະບຽງເລັກໜ້ອຍ ເດີນທາງທີ່ກັນດານຢູ່ເຂົາທັງສອງມີບຸດນ້ອຍ ໑ ຄົນທີ່ໜ້າຮັກແລະໜ້າພໍໃຈ ຂະນະທີ່ພວກເຂົາກຳລັງເດີນທາງກັນດານນັ້ນຢູ່ ສະບຽງທີ່ມີພຽງເລັກໜ້ອຍໄດ້ໝົດສິ້ນໄປ ແຕ່ທາງກັນດານຂອງພວກເຂົາຍັງບໍ່ຜ່ານໄປ ຍັງເຫຼືອຢູ່ໄກ ລຳດັບນັ້ນ ເຂົາທັງສອງຕຶກລົງກັນວ່າ ສະບຽງທີ່ເຫຼືອຢູ່ເລັກໜ້ອຍໄດ້ໝົດສິ້ນໄປແລ້ວ ແຕ່ທາງກັນດານຍັງເຫຼືອຢູ່ໄກ ທາງທີ່ດີ ພວກເຮົາຊ່ອຍກັນຂ້າບຸດນ້ອຍ ທີ່ໜ້າຮັກໜ້າພໍໃຈຄົນນີ້ເສຍ ເຮັດເປັນຊີ້ນເຄັມແລະຊີ້ນຍ້າງ ບໍຣິໂພກຊີ້ນບຸດ ກໍຈະຂ້າມພົ້ນທາງກັນດານທີ່ເຫຼືອຢູ່ໄດ້ເຮົາທັງ ໓ ຢ່າພິນາດພ້ອມກັນເລີຍ ຕໍ່ມາ ພັນລະຍາສາມີທັງສອງນັ້ນ ກໍຂ້າບຸດນ້ອຍທີ່ໜ້າຮັກ

ໜ້າພໍໃຈຄົນນັ້ນ ເຮັດເປັນຊີ້ນເຄັມແລະຊີ້ນຢ້າງ ບໍຣິໂພກຊີ້ນບຸດນັ້ນ ຈຶ່ງຂ້າມພົ້ນທາງກັນດານນັ້ນໄປໄດ້ ພວກເຂົາບໍຣິໂພກຊີ້ນບຸດໄປພ້ອມທຸບເອິກໄປພ້ອມ ຮ່ຳໄຮວ່າ ບຸດນ້ອຍຢູ່ທີ່ໃດ ບຸດນ້ອຍຢູ່ທີ່ໃດ

ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ?

ຄື ພວກເຂົາຈັກບໍຣິໂພກຊີ້ນບຸດນ້ອຍຂອງຕົນເປັນອາຫານ ເພື່ອຫຼິ້ນ ເພື່ອຄວາມມົວເມົາ ຫຼື ເພື່ອຕົກແຕ່ງ ເພື່ອປະດັບຮ່າງກາຍແມ່ນບໍ?

ບໍ່ເປັນແນວນັ້ນ ຂ້ານ້ອຍ

ພວກເຂົາຈັກບໍຣິໂພກອາຫານທີ່ປຸງຈາກຊີ້ນບຸດນ້ອຍຂອງຕົນ ພຽງເພື່ອຈະຂ້າມທາງກັນດານໃຫ້ພົ້ນທີ່ນັ້ນແມ່ນບໍ?

ແມ່ນ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເຮົາກ່າວວ່າ ບຸກຄົນເພິ່ງເຫັນກະວະລິງກາຣາຫານ (ປຽບຄືຊີ້ນບຸດນ້ອຍຂອງຕົນ) ເມື່ອອະຣິຍະສາວົກກຳນົດຮູ້ກະວະລິງກາຣາຫານໄດ້ແລ້ວ ກໍເປັນອັນກຳນົດຮູ້ຣາຄະເຊິ່ງເກີດຈາກກາມມະຄຸນ ໕ ເມື່ອກຳນົດຮູ້ຣາຄະເຊິ່ງເກີດຈາກກາມມະຄຸນ ໕ ໄດ້ແລ້ວ ສັງໂຍດທີ່ເປັນເຄື່ອງຊັກນຳອະຣິຍະສາວົກໃຫ້ມາສູ່ໂລກນີ້ອີກ ກໍບໍ່ມີ

ຜັດສາຫານ ຈະເພິ່ງເຫັນໄດ້ແນວໃດ?

ປຽບຄື ແມ່ງົວທີ່ບໍ່ມີໜັງຫຸ້ມ ຖ້າຢືນອີງຝາຢູ່ ກໍຈະຖືກຝູງສັດທີ່ອາໄສຝາເຈາະກິນ ຖ້າຢືນອີງຕົ້ນໄມ້ຢູ່ ກໍຈະຖືກຝູງສັດທີ່ອາໄສຕົ້ນໄມ້ເຈາະກິນ ຖ້າລົງໄປຢືນແຊ່ນ້ຳຢູ່ ກໍຈະຖືກຝູງສັດທີ່ອາໄສຢູ່ໃນນ້ຳກັດກິນ ຖ້າຢືນຢູ່ໃນກາງແຈ້ງ ກໍຈະຖືກຝູງສັດທີ່ອາໄສຢູ່ໃນອາກາດຈັບຕອດກິນ ບໍ່ວ່າແມ່ງົວໂຕທີ່ບໍ່ມີໜັງຫຸ້ມໂຕນັ້ນ ຈະໄປອາໄສຢູ່ໃນສະຖານບ່ອນໃດ ໆ ກໍຕາມ ກໍຖືກຈຳພວກສັດທີ່ອາໄສຢູ່ໃນສະຖານບ່ອນນັ້ນ ໆ ກັດກິນຢູ່ບໍ່ສິ້ນສຸດ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເຮົາກ່າວວ່າ ບຸກຄົນເພິ່ງເຫັນຜັດສາຫານ (ປຽບຄື ແມ່ງົວທີ່ບໍ່ມີໜັງຫຸ້ມ) ເມື່ອອະຣິຍະສາວົກກຳນົດຮູ້ຜັດສາຫານໄດ້ແລ້ວກໍເປັນອັນກຳນົດຮູ້ ເວທະນາ ໓ ປະການ ເມື່ອກຳນົດຮູ້ເວທະນາ ໓ ປະການໄດ້ແລ້ວ ເຮົາກ່າວວ່າ ບໍ່ມີສິ່ງໃດທີ່ອະຣິຍະສາວົກເພິ່ງເຮັດໃຫ້ຍິ່ງໄປກວ່ານີ້

ມະໂນສັນເຈຕະນາຫານ ຈະເພິ່ງເຫັນໄດ້ແນວໃດ?

ປຽບຄື ຂຸມຖ່ານໄຟ ເລິກກວ່າຄວາມສູງຂອງຄົນ ເຕັມໄປດ້ວຍຖ່ານໄຟ ບໍ່ມີນ້ຳ ບໍ່ມີຄວັນ ຄັ້ງນັ້ນ ບຸຣຸດຄົນໜຶ່ງຕ້ອງການມີຊີວິດຢູ່ບໍ່ຢາກຕາຍ ຮັກສຸກຊັງທຸກຢ່າງມາ ບຸຣຸດມີກຳລັງ

໔ ຄົນຈັບແຂນຂອງເຂົາຄົນລະຂ້າງດຶງໄປລົງຂຸມຖ່ານໄຟ ທັນໃດນັ້ນ ເຂົາມີເຈຕະນາປາຖະໜາ ຕັ້ງໃຈຈະໄປໃຫ້ໄກຈາກຂຸມຖ່ານໄຟ ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນເຂົາຮູ້ວ່າ ຖ້າເຮົາຈັກຕົກລົງໃນຂຸມຖ່ານໄຟນີ້ ເຮົາຈັກຕ້ອງຕາຍຫຼືທຸກປາງຕາຍ ຍ້ອນເຫດນັ້ນ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເຮົາກ່າວວ່າ ບຸກຄົນເພິ່ງເຫັນມະໂນສັນເຈຕະນາຫານ (ປຽບຄືຂຸມຖ່ານໄຟ) ເມື່ອອະຣິຍະສາວົກກຳນົດຮູ້ມະໂນສັນເຈຕະນາຫານໄດ້ແລ້ວ ກໍເປັນອັນກຳນົດຮູ້ຕັນຫາ ໓ ປະການ ເມື່ອກຳນົດຮູ້ຕັນຫາ ໓ ປະການໄດ້ແລ້ວເຮົາກ່າວວ່າບໍ່ມີສິ່ງໃດທີ່ອະຣິຍະສາວົກເພິ່ງເຮັດໃຫ້ຍິ່ງໄປກວ່ານີ້

ວິນຍານາຫານ ຈະເພິ່ງເຫັນໄດ້ແນວໃດ?

ປຽບຄື ຣາດຊະບຸຣຸດທັງຫຼາຍ ຈັບໂຈນຜູ້ປະພຶດຊົ່ວມາໄດ້ແລ້ວ ຈຶ່ງທູນສະແດງແດ່ພຣະຣາຊາວ່າ ຂໍເດຊະ ຜູ້ນີ້ເປັນໂຈນປະພຶດຊົ່ວຕໍ່ພຣະອົງ ຂໍຈົ່ງຊົງລົງພຣະອາຍາຕາມທີ່ຊົງພຣະຣາຊະປະສົງແກ່ໂຈນຜູ້ນີ້ດ້ວຍເທີ້ນ

ພຣະຣາຊາມີພຣະກະແສຮັບສັ່ງວ່າ ທ່ານທັງຫຼາຍ ຈົ່ງຊ່ອຍກັນປະຫານໂຈນນັ້ນເສຍດ້ວຍຫອກ ໑໐໐ ເຫຼັ້ມໃນເວລາເຊົ້າ ຣາດຊະບຸຣຸດທັງຫຼາຍ ກໍຊ່ອຍກັນປະຫານນັກໂທດຄົນນັ້ນດ້ວຍຫອກ ໑໐໐ ເຫຼັ້ມໃນເຊົ້າມື້ນັ້ນ

ຕໍ່ມາໃນເວລາທ່ຽງວັນ ພຣະຣາຊາຊົງຊັກຖາມຣາດຊະບຸຣຸດທັງຫຼາຍວ່າ ທ່ານທັງຫຼາຍນັກໂທດຄົນນັ້ນເປັນແນວໃດແລ້ວ?

ຣາດຊະບຸຣຸດທັງຫຼາຍຂາບທູນວ່າ ເຂົາຍັງມີຊີວິດຢູ່ ຂ້ານ້ອຍ ຈຶ່ງມີພຣະກະແສຮັບສັ່ງວ່າ ທ່ານທັງຫຼາຍ ຈົ່ງຊ່ອຍກັນປະຫານໂຈນນັ້ນ ດ້ວຍຫອກ ໑໐໐ ເຫຼັ້ມ ໃນເວລາທ່ຽງວັນ ຣາດຊະບຸຣຸດທັງຫຼາຍ ກໍຊ່ອຍກັນປະຫານນັກໂທດຄົນນັ້ນດ້ວຍຫອກ ໑໐໐ ເຫຼັ້ມ ໃນເວລາທ່ຽງວັນ

ຕໍ່ມາໃນເວລາຄ່ຳ ພຣະຣາຊາຊົງຊັກຖາມຣາດຊະບຸຣຸດທັງຫຼາຍອີກວ່າ ທ່ານທັງຫຼາຍນັກໂທດຄົນນັ້ນເປັນແນວໃດແລ້ວ?

ຣາດຊະບຸຣຸດທັງຫຼາຍຂາບທູນວ່າ ເຂົາຍັງມີຊີວິດຢູ່ ຂ້ານ້ອຍ ຈຶ່ງມີ ພຣະກະແສຮັບສັ່ງວ່າ ທ່ານທັງຫຼາຍ ຈົ່ງຊ່ອຍກັນປະຫານໂຈນດ້ວຍຫອກ ໑໐໐ ເຫຼັ້ມ ໃນເວລາຄ່ຳ

ຣາດຊະບຸຣຸດທັງຫຼາຍ ກໍຊ່ອຍກັນປະຫານນັກໂທດຄົນນັ້ນດ້ວຍຫອກ ໑໐໐ ເຫຼັ້ມໃນເວລາຄ່ຳ

ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ?

ຄື ເມື່ອເຂົາຖືກປະຫານດ້ວຍຫອກ ໓໐໐ ເຫຼັ້ມເບິດມື້ ຈະເພິ່ງໄດ້ສະເຫວີຍທຸກ ໂທມະນັດເຊິ່ງມີການປະຫານນັ້ນເປັນເຫດ ບໍ່ແມ່ນບໍ?

ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນວ່າເຂົາຖືກປະຫານດ້ວຍຫອກ ໑ ເຫຼັ້ມ ຍັງໄດ້ສະເຫວີຍທຸກໂທມະນັດ ເຊິ່ງມີການປະຫານນັ້ນເປັນເຫດ ບໍ່ຕ້ອງເວົ້າຮອດຖືກປະຫານດ້ວຍຫອກ ໓໐໐ ເຫຼັ້ມດອກ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເຮົາກ່າວວ່າ ບຸກຄົນເພິ່ງເຫັນວິນຍານາຫານ (ປຽບຄືນັກໂທດປະຫານ) ເມື່ອອະຣິຍະສາວົກ ກຳນົດຮູ້ວິນຍານາຫານໄດ້ແລ້ວ ກໍເປັນອັນກຳນົດຮູ້ນາມຮູບໄດ້ ເມື່ອກຳນົດຮູ້ນາມຮູບໄດ້ແລ້ວ ເຮົາກ່າວວ່າ ບໍ່ມີສິ່ງໃດທີ່ອະຣິຍະສາວົກເພິ່ງເຮັດໃຫ້ຍິ່ງໄປກວ່ານີ້

**ປຸດຕະມັງສະສູດທີ ໓ ຈົບ**

# ໔. ອັດຖິຣາຄະສູດ

## ວ່າດ້ວຍຣາຄະມີຢູ່

[໖໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ອາຫານ ໔ ຢ່າງນີ້ ເປັນໄປເພື່ອຄວາມດຳລົງຢູ່ຂອງໝູ່ສັດຜູ້ເກີດແລ້ວ ຫຼື ເພື່ອອະນຸເຄາະໝູ່ສັດຜູ້ສະແຫວງຫາທີ່ເກີດ

ອາຫານ ໔ ແນວ ອັນໃດແດ່ ຄື

໑. ກະວະລິງກາຣາຫານ ທີ່ຫຍາບຫຼືລະອຽດ
໒. ຜັດສາຫານ
໓. ມະໂນສັນເຈຕະນາຫານ
໔. ວິນຍານາຫານ

ອາຫານ ໔ ຢ່າງນີ້ ເປັນໄປເພື່ອຄວາມດຳລົງຢູ່ຂອງໝູ່ສັດຜູ້ເກີດແລ້ວ ຫຼື ເພື່ອອະນຸເຄາະໝູ່ສັດຜູ້ສະແຫວງຫາທີ່ເກີດ

ຖ້າຣາຄະ (ຄວາມກຳໜັດ) ນັນທິ (ຄວາມເພີດເພີນ) ຕັນຫາ (ຄວາມທະຍານຢາກ) ມີຢູ່ໃນກະວະລິງກາຣາຫານ ວິນຍານຈະຕັ້ງຢູ່ງອກງາມໃນກະວະລິງກາຣາຫານນັ້ນ ບ່ອນໃດວິນຍານ ຕັ້ງຢູ່ງອກງາມ ບ່ອນນັ້ນຍ່ອມມີນາມຮູບຢັ່ງລົງ ບ່ອນໃດມີນາມຮູບຢັ່ງລົງ ບ່ອນນັ້ນຍ່ອມມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນໃດມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນນັ້ນຍ່ອມມີການເກີດໃນພົບໃໝ່ຕໍ່ໄປ ບ່ອນໃດມີການເກີດໃນພົບໃໝ່ຕໍ່ໄປ ບ່ອນນັ້ນຍ່ອມມີຊາດຊະຣາແລະມໍລະນະຕໍ່ໄປ ບ່ອນໃດມີຊາດ ຊະຣາແລະມໍລະນະຕໍ່ໄປ ເຮົາກ່າວວ່າບ່ອນນັ້ນມີຄວາມໂສກ ມີຄວາມກະວົນກະວາຍ ແລະ ມີຄວາມຄັບແຄ້ນ

ຖ້າຣາຄະ ນັນທິ ຕັນຫາ ມີຢູ່ໃນຜັດສາຫານ ຯລຯ

ຖ້າຣາຄະ ນັນທິ ຕັນຫາ ມີຢູ່ໃນມະໂນສັນເຈຕະນາຫານ ຯລຯ

ຖ້າຣາຄະ ນັນທິ ຕັນຫາ ມີຢູ່ໃນວິນຍານາຫານ ວິນຍານຈະຕັ້ງຢູ່ງອກງາມ ໃນວິນຍານາຫານນັ້ນ ບ່ອນໃດມີວິນຍານຕັ້ງຢູ່ງອກງາມ ບ່ອນນັ້ນຍ່ອມມີນາມຮູບຢັ່ງລົງ ບ່ອນໃດມີນາມຮູບຢັ່ງລົງ ບ່ອນນັ້ນ ຍ່ອມມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນໃດມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນນັ້ນ ຍ່ອມມີການເກີດໃນພົບໃໝ່ຕໍ່ໄປ ບ່ອນໃດມີການເກີດໃນພົບໃໝ່ຕໍ່ໄປ ບ່ອນນັ້ນ ຍ່ອມມີຊາດ ຊະຣາແລະມໍລະນະຕໍ່ໄປ ບ່ອນໃດມີຊາດ ຊະຣາແລະມໍລະນະຕໍ່ໄປ ເຮົາກ່າວວ່າ ບ່ອນນັ້ນ ມີຄວາມໂສກ ມີຄວາມກະວົນກະວາຍແລະມີຄວາມຄັບແຄ້ນ

ປຽບຄື ເມື່ອມີນ້ຳຍ້ອມ ຄັ່ງ ຂີ້ມິ້ນ ສີຂຽວ ຫຼື ສີແດງອ່ອນ ຊ່າງຍ້ອມ ຫຼື ຈິດຕະກອນເພິ່ງແຕ້ມຮູບພາບສະຕີ ຫຼື ຮູບພາບບຸຣຸດ ໃຫ້ໄດ້ສັດສ່ວນຄົບຖ້ວນລົງເທິງແຜ່ນແປ້ນທີ່ຂັດດີແລ້ວ ຝາ ຫຼື ແຜ່ນຜ້າ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຖ້າຣາຄະ ນັນທິ ຕັນຫາມີຢູ່ໃນກະວະລິງກາຣາຫານ ວິນຍານຈະຕັ້ງຢູ່ງອກງາມໃນກະວະລິງກາຣາຫານນັ້ນ ບ່ອນໃດມີວິນຍານ ຕັ້ງຢູ່ງອກງາມ ບ່ອນນັ້ນ ຍ່ອມມີນາມຮູບຢັ່ງລົງ ບ່ອນໃດມີນາມຮູບຢັ່ງລົງ ບ່ອນນັ້ນຍ່ອມມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນໃດ ມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນນັ້ນ ຍ່ອມມີການເກີດໃນພົບໃໝ່ຕໍ່ໄປ ບ່ອນໃດມີການເກີດໃນພົບໃໝ່ຕໍ່ໄປ ບ່ອນນັ້ນ ຍ່ອມມີຊາດ ຊະຣາແລະມໍລະນະຕໍ່ໄປ ບ່ອນໃດມີຊາດ ຊະຣາແລະມໍລະນະຕໍ່ໄປ ເຮົາກ່າວວ່າບ່ອນນັ້ນ ມີຄວາມໂສກ ມີຄວາມກະວົນກະວາຍ ແລະ ມີຄວາມຄັບແຄ້ນ

ຖ້າຣາຄະ ນັນທິ ຕັນຫາ ມີຢູ່ໃນຜັດສາຫານ ຯລຯ

ຖ້າຣາຄະ ນັນທິ ຕັນຫາ ມີຢູ່ໃນມະໂນສັນເຈຕະນາຫານ ຯລຯ

ຖ້າຣາຄະ ນັນທິ ຕັນຫາ ມີຢູ່ໃນວິນຍານາຫານ ວິນຍານຈະຕັ້ງຢູ່ງອກງາມ ໃນວິນຍານາຫານນັ້ນ ບ່ອນໃດມີວິນຍານຕັ້ງຢູ່ງອກງາມ ບ່ອນນັ້ນ ຍ່ອມມີນາມຮູບຢັ່ງລົງ ບ່ອນໃດ ມີນາມຮູບຢັ່ງລົງ ບ່ອນນັ້ນ ຍ່ອມມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນໃດມີຄວາມຈະເລີນແຫ່ງ

ສັງຂານທັງຫຼາຍ ບ່ອນນັ້ນ ຍ່ອມມີການເກີດໃນພົບໃໝ່ຕໍ່ໄປ ບ່ອນໃດມີການເກີດໃນພົບໃໝ່ຕໍ່ໄປ ບ່ອນນັ້ນ ຍ່ອມມີຊາດ ຊະຣາແລະມໍລະນະຕໍ່ໄປ ເຮົາກ່າວວ່າບ່ອນນັ້ນ ມີຄວາມໂສກ ມີຄວາມ ກະວົນ ກະວາຍ ແລະ ມີຄວາມຄັບແຄ້ນ

ພິກຂຸທັງຫຼາຍ ຖ້າຣາຄະ ນັນທິ ຕັນຫາ ບໍ່ມີໃນກະວະລິງກາຣາຫານ ວິນຍານຈະບໍ່ຕັ້ງຢູ່ງອກງາມໃນກະວະລິງກາຣາຫານນັ້ນ ບ່ອນໃດ ວິນຍານບໍ່ຕັ້ງຢູ່ງອກງາມ ບ່ອນນັ້ນ ຍ່ອມບໍ່ມີນາມຮູບຢັ່ງລົງ ບ່ອນໃດ ບໍ່ມີນາມຮູບຢັ່ງລົງ ບ່ອນນັ້ນ ຍ່ອມບໍ່ມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນໃດ ບໍ່ມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນນັ້ນ ຍ່ອມບໍ່ມີການເກີດໃນພົບໃໝ່ຕໍ່ໄປ ບ່ອນໃດ ບໍ່ມີການເກີດໃນພົບໃໝ່ຕໍ່ໄປ ບ່ອນນັ້ນ ຍ່ອມບໍ່ມີຊາດ ຊະຣາແລະມໍລະນະຕໍ່ໄປ ບ່ອນໃດບໍ່ມີຊາດ ຊະຣາແລະມໍລະນະຕໍ່ໄປ ເຮົາກ່າວວ່າບ່ອນນັ້ນບໍ່ມີຄວາມໂສກ ບໍ່ມີຄວາມກະວົນກະວາຍ ແລະ ບໍ່ມີຄວາມຄັບແຄ້ນ

ຖ້າຣາຄະ ນັນທິ ຕັນຫາ ບໍ່ມີໃນຜັດສາຫານ ຯລຯ

ຖ້າຣາຄະ ນັນທິ ຕັນຫາ ບໍ່ມີໃນມະໂນສັນເຈຕະນາຫານ ຯລຯ

ຖ້າຣາຄະ ນັນທິ ຕັນຫາ ບໍ່ມີໃນວິນຍານາຫານ ວິນຍານຈະບໍ່ຕັ້ງຢູ່ງອກງາມໃນວິນຍານາຫານນັ້ນ ບ່ອນໃດວິນຍານບໍ່ຕັ້ງຢູ່ງອກງາມ ບ່ອນນັ້ນຍ່ອມບໍ່ມີນາມຮູບຢັ່ງລົງ ບ່ອນໃດບໍ່ມີນາມຮູບຢັ່ງລົງ ບ່ອນນັ້ນ ຍ່ອມບໍ່ມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນໃດ ບໍ່ມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນນັ້ນ ຍ່ອມບໍ່ມີການເກີດໃນພົບໃໝ່ຕໍ່ໄປ ບ່ອນໃດບໍ່ມີການເກີດໃນພົບໃໝ່ຕໍ່ໄປ ບ່ອນນັ້ນ ຍ່ອມບໍ່ມີຊາດ ຊະຣາແລະມໍລະນະຕໍ່ໄປ ບ່ອນໃດ ບໍ່ມີຊາດ ຊະຣາແລະມໍລະນະຕໍ່ໄປ ເຮົາກ່າວວ່າບ່ອນນັ້ນບໍ່ມີຄວາມໂສກ ບໍ່ມີຄວາມກະວົນກະວາຍ ແລະ ບໍ່ມີຄວາມຄັບແຄ້ນ

ປຽບຄື ເຮືອນຍອດ ຫຼື ສາລາເຮືອນຍອດ ມີປ່ອງຢ້ຽມດ້ານທິດເໜືອທິດໃຕ້ ຫຼື ທິດຕາເວັນອອກ ພໍດວງອາທິດຂຶ້ນ ແສງສະຫວ່າງທີ່ເຂົ້າທາງປ່ອງຢ້ຽມ ຈະເພິ່ງສ່ອງໃສ່ບ່ອນໃດ?

ສ່ອງໃສ່ຝາດ້ານທິດຕາເວັນຕົກ ຂ້ານ້ອຍ

ຖ້າບໍ່ມີຝາດ້ານທິດຕາເວັນຕົກເດ ແສງສະຫວ່າງນັ້ນ ຈະເພິ່ງສ່ອງໃສ່ບ່ອນໃດ?

ໃສ່ແຜ່ນດິນ ຂ້ານ້ອຍ

ຖ້າບໍ່ມີແຜ່ນດິນເດ ແສງສະຫວ່າງນັ້ນຈະເພິ່ງສ່ອງໃສ່ບ່ອນໃດ?

ໃສ່ນໍ້າ ຂ້ານ້ອຍ

ຖ້າບໍ່ມີນໍ້າເດ ແສງສະຫວ່າງຈະເພິ່ງສ່ອງໃສ່ບ່ອນໃດ?

ບໍ່ມີບ່ອນສ່ອງ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຖ້າຣາຄະ ນັນທິ ຕັນຫາ ບໍ່ມີໃນກະວະລິງກາຣາຫານ ຯລຯ

ຖ້າຣາຄະ ນັນທິ ຕັນຫາ ບໍ່ມີໃນຜັດສາຫານ ຯລຯ

ຖ້າຣາຄະ ນັນທິ ຕັນຫາ ບໍ່ມີໃນມະໂນສັນຍະເຈຕະນາຫານ ຯລຯ

ຖ້າຣາຄະ ນັນທິ ຕັນຫາ ບໍ່ມີໃນວິນຍານາຫານ ວິນຍານຈະບໍ່ຕັ້ງຢູ່ງອກງາມໃນວິນຍານາຫານນັ້ນ ບ່ອນໃດວິນຍານບໍ່ຕັ້ງຢູ່ງອກງາມ ບ່ອນນັ້ນຍ່ອມບໍ່ມີນາມຮູບຢັ່ງລົງ ບ່ອນໃດບໍ່ມີນາມຮູບຢັ່ງລົງ ບ່ອນນັ້ນຍ່ອມບໍ່ມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນໃດບໍ່ມີຄວາມຈະເລີນແຫ່ງສັງຂານທັງຫຼາຍ ບ່ອນນັ້ນຍ່ອມບໍ່ມີການເກີດໃນພົບໃໝ່ຕໍ່ໄປ ບ່ອນໃດບໍ່ມີການເກີດໃນພົບໃໝ່ຕໍ່ໄປ ບ່ອນນັ້ນຍ່ອມບໍ່ມີຊາດ ຊະຣາແລະມໍລະນະຕໍ່ໄປ ບ່ອນໃດບໍ່ມີຊາດ ຊະຣາແລະມໍລະນະຕໍ່ໄປ ເຮົາກ່າວວ່າບ່ອນນັ້ນບໍ່ມີຄວາມໂສກ ບໍ່ມີຄວາມກະວົນກະວາຍ ແລະບໍ່ມີຄວາມຄັບແຄ້ນ

**ອັດຖິຣາຄະສູດທີ ໔ ຈົບ**

# ໕. ນະຄະຣະສູດ

## ວ່າດ້ວຍນະຄອນ

[໖໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ກ່ອນແຕ່ຕັດສະຮູ້ ເມື່ອເຮົາເປັນໂພທິສັດ ຍັງບໍ່ໄດ້ຕັດສະຮູ້ ໄດ້ມີຄວາມຄິດຄໍານຶງແນວນີ້ວ່າ ໂລກນີ້ເຖິງຄວາມຄັບແຄ້ນ ຈຶ່ງເກີດ ແກ່ ຕາຍ ຈຸຕິແລະອຸບັດ ກໍບຸກຄົນບໍ່ຮູ້ອຸບາຍສະບັດອອກຈາກທຸກ ຄື ຊະຣາແລະມໍລະນະນີ້ ເມື່ອໃດຈຶ່ງຈະພົ້ນຈາກທຸກຄືຊະຣາແລະມໍລະນະນີ້ໄດ້ ເຮົາໄດ້ດໍາຣິວ່າ ເມື່ອອັນໃດມີ ຊະຣາແລະມໍລະນະຈຶ່ງມີ ຍ້ອນອັນໃດ? ເປັນປັດໄຈຊະຣາ ແລະ ມໍລະນະຈຶ່ງມີ ຍ້ອນມະນະສິການໂດຍແຍບຄາຍ ເຮົາຈຶ່ງໄດ້ຮູ້ແຈ້ງດ້ວຍປັນຍາວ່າ ເມື່ອຊາດມີ ຊະຣາແລະມໍລະນະຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ

ເຮົາໄດ້ດໍາຣິວ່າ ເມື່ອອັນໃດມີ ຊາດຈຶ່ງມີ ຯລຯ ພົບຈຶ່ງມີ ຯລຯ ອຸປາທານຈຶ່ງມີ ຯລຯ ຕັນຫາ ຈຶ່ງມີ ຯລຯ ເວທະນາຈຶ່ງມີ ຯລຯ ຜັດສະຈຶ່ງມີຯລຯ ສະລາຍະຕະນະຈຶ່ງມີ ຯລຯ ນາມຮູບຈຶ່ງມີ ຯລຯ ຍ້ອນອັນໃດ? ເປັນປັດໄຈ ນາມຮູບຈຶ່ງມີ ຍ້ອນມະນະສິການໂດຍແຍບຄາຍ ເຮົາຈຶ່ງໄດ້ຮູ້ແຈ້ງດ້ວຍປັນຍາວ່າ ຍ້ອນວິນຍານມີ ນາມຮູບຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ

ເຮົາໄດ້ດຳຣິວ່າ ເມື່ອອັນໃດມີ ວິນຍານຈຶ່ງມີ ຍ້ອນອັນໃດ? ເປັນປັດໄຈ ວິນຍານຈຶ່ງມີ ຍ້ອນມະນະສິການໂດຍແຍບຄາຍ ເຮົາຈຶ່ງໄດ້ຮູ້ແຈ້ງດ້ວຍປັນຍາວ່າ ຍ້ອນນາມຮູບມີ ວິນຍານຈຶ່ງມີ ຍ້ອນນາມຮູບເປັນປັດໄຈ ວິນຍານຈຶ່ງມີ

ເຮົາໄດ້ດຳຣິວ່າ ວິນຍານນີ້ຍ່ອມກັບມາ ບໍ່ພົ້ນຈາກນາມຮູບ ດ້ວຍເຫດພຽງທີ່ນີ້ ໂລກຈຶ່ງເກີດ ແກ່ ຕາຍ ຈຸຕິ ແລະ ອຸບັດ ກ່າວຄື ຍ້ອນນາມຮູບເປັນປັດໄຈ ວິນຍານ ຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະ ຈຶ່ງມີ ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ພິກຂຸທັງຫຼາຍ ຈັກຂຸ ຍານ ປັນຍາ ວິດຊາ ແສງສະຫວ່າງ ໃນທຳທັງຫຼາຍທີ່ເຮົາບໍ່ເຄີຍໄດ້ຟັງມາກ່ອນໄດ້ເກີດຂຶ້ນແລ້ວແກ່ເຮົາວ່າ ສະມຸໄທ ສະມຸໄທ

ເຮົາໄດ້ດຳຣິວ່າ ເມື່ອອັນໃດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ ຍ້ອນອັນໃດດັບ ຊະຣາແລະມໍລະນະຈຶ່ງດັບ ຍ້ອນມະນະສິການໂດຍແຍບຄາຍ ເຮົາຈຶ່ງໄດ້ຮູ້ແຈ້ງດ້ວຍປັນຍາວ່າ ເມື່ອຊາດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ ຍ້ອນຊາດດັບ ຊະຣາແລະມໍລະນະຈຶ່ງດັບ

ເຮົາໄດ້ດຳຣິວ່າ ຍ້ອນອັນໃດບໍ່ມີ ຊາດຈຶ່ງບໍ່ມີ ຯລຯ ພົບຈຶ່ງບໍ່ມີ ຯລຯ ອຸປາທານຈຶ່ງ ບໍ່ມີ ຯລຯ ຕັນຫາຈຶ່ງບໍ່ມີ ຯລຯ ເວທະນາຈຶ່ງບໍ່ມີ ຯລຯ ຜັດສະຈຶ່ງບໍ່ມີ ຯລຯ ສະລາຍະຕະນະຈຶ່ງບໍ່ມີ ຯລຯ ນາມຮູບຈຶ່ງບໍ່ມີ ຯລຯ ຍ້ອນອັນໃດດັບ ນາມຮູບຈຶ່ງດັບ ຍ້ອນມະນະສິການໂດຍແຍບຄາຍ ເຮົາຈຶ່ງໄດ້ ຮູ້ແຈ້ງດ້ວຍປັນຍາວ່າ ຍ້ອນວິນຍານບໍ່ມີ ນາມຮູບຈຶ່ງບໍ່ມີ ຍ້ອນວິນຍານດັບ ນາມຮູບຈຶ່ງດັບ

ເຮົາໄດ້ດຳຣິວ່າ ຍ້ອນອັນໃດບໍ່ມີ ວິນຍານຈຶ່ງບໍ່ມີ ຍ້ອນອັນໃດດັບ ວິນຍານຈຶ່ງດັບ ຍ້ອນມະນະສິການໂດຍແຍບຄາຍ ເຮົາຈຶ່ງໄດ້ຮູ້ແຈ້ງດ້ວຍປັນຍາວ່າ ຍ້ອນນາມຮູບບໍ່ມີ ວິນຍານຈຶ່ງບໍ່ມີ ຍ້ອນນາມຮູບດັບ ວິນຍານຈຶ່ງດັບ

ເຮົາໄດ້ດຳຣິວ່າ ມັກນີ້ເຮົາໄດ້ບັນລຸແລ້ວ ດ້ວຍປັນຍາເຄື່ອງຕັດສະຣູ້ ຄື ຍ້ອນນາມຮູບດັບ ວິນຍານຈຶ່ງດັບ ຍ້ອນວິນຍານດັບ ນາມຮູບຈຶ່ງດັບ ຍ້ອນນາມຮູບດັບ ສະລາຍະຕະນະຈຶ່ງດັບ ຍ້ອນສະລາຍະຕະນະດັບ ຜັດສະຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້

ພິກຂຸທັງຫຼາຍ ຈັກຂຸ ຍານ ປັນຍາ ວິດຊາ ແສງສະຫວ່າງ ໃນທຳທັງຫຼາຍທີ່ເຮົາບໍ່ເຄີຍໄດ້ຟັງມາກ່ອນໄດ້ເກີດຂຶ້ນແລ້ວແກ່ເຮົາວ່າ ນິໂຣດ ນິໂຣດ

ປຽບຄື ບຸຣຸດເມື່ອທ່ຽວໄປໃນປ່ານ້ອຍ ປ່າໃຫຍ່ ພົບທາງເກົ່າທີ່ຄົນສະໄໝກ່ອນເຄີຍໃຊ້ຍ່າງໄປມາ ເຂົາຍ່າງຕາມທາງນັ້ນໄປ ພົບນະຄອນເກົ່າ ຣາດຊະທານີບູຮານເຊິ່ງສົມບູນດ້ວຍສວນດອກໄມ້ ປ່າໄມ້ ສະໂບກຂະຣະນີ ຫໍຄອຍ ລ້ອມໜ້າອອນຊອນ ທີ່ຄົນສະໄໝກ່ອນເຄີຍຢູ່ອາໄສ ຕໍ່ມາເຂົາໄດ້ຂາບທູນພຣະຣາຊາ ຫຼື ຮຽນແກ່ຣາດຊະມະຫາອຳມາດວ່າ ຂໍເດຊະ ຂໍພຣະອົງໂຜດຊົງຮັບຮູ້ເທີ້ນຂ້ານ້ອຍ ຂ້າພຣະອົງເມື່ອທ່ຽວໄປໃນປ່ານ້ອຍ ປ່າໃຫຍ່ ໄດ້ພົບທາງເກົ່າທີ່ຄົນສະໄໝກ່ອນເຄີຍໃຊ້ຍ່າງໄປມາ ຂ້າພຣະອົງຍ່າງຕາມທາງນັ້ນໄປ ຂະນະຍ່າງຢູ່ ກໍໄດ້ພົບນະຄອນເກົ່າ ຣາດຊະທານີບູຮານເຊິ່ງສົມບູນດ້ວຍສວນດອກໄມ້ ປ່າໄມ້ ສະໂບກຂະຣະນີ ຫໍຄອຍ ລ້ອມໜ້າອອນຊອນ ທີ່ຄົນສະໄໝກ່ອນເຄີຍຢູ່ອາໄສ ຂໍພຣະອົງໂຜດໃຫ້ສ້າງພຣະນະຄອນນັ້ນເທີ້ນ ຂ້ານ້ອຍ ຫຼັງຈາກນັ້ນ ພຣະຣາຊາຫຼືຣາດຊະມະຫາອຳມາດ ຈຶ່ງໄດ້ສ້າງນະຄອນນັ້ນຂຶ້ນມາ ຕໍ່ມາພຣະນະຄອນນັ້ນໄດ້ຮັ່ງມີອຸດົມສົມບູນ ມີປະຊາກອນຫຼາຍ ມີພົນລະເມືອງໜາແໜ້ນ ທັງເຖິງຄວາມຈະເລີນໄພບູນ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເຮົາໄດ້ພົບທາງເກົ່າ ທີ່ພຣະສຳມາສຳພຸດທະເຈົ້າອົງກ່ອນ ໆ ເຄີຍສະເດັດພຣະດຳເນີນມາກ່ອນ

ທາງເກົ່າທີ່ພຣະສຳມາສຳພຸດທະເຈົ້າອົງກ່ອນ ໆ ເຄີຍສະເດັດພຣະດຳເນີນມາກ່ອນເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຄື ທາງເກົ່າທີ່ພຣະສຳມາສຳພຸດທະເຈົ້າອົງກ່ອນ ໆ ເຄີຍສະເດັດພຣະດຳເນີນມາກ່ອນ ເຮົາກໍໄດ້ດຳເນີນຕາມທາງນັ້ນ ໄດ້ຮູ້ແຈ້ງຊະຣາແລະມໍລະນະ ໄດ້ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະ ໄດ້ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະ ແລະ ໄດ້ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ ເຮົາໄດ້ດຳເນີນໄປຕາມທາງນັ້ນແລ້ວ ຂະນະດຳເນີນໄປໄດ້ຮູ້ແຈ້ງຊາດ ຯລຯ ໄດ້ຮູ້ແຈ້ງພົບ ຯລຯ ໄດ້ຮູ້ແຈ້ງອຸປາທານ ຯລຯ ໄດ້ຮູ້ແຈ້ງຕັນຫາ ຯລຯ ໄດ້ຮູ້ແຈ້ງເວທະນາ ຯລຯ ໄດ້ຮູ້ແຈ້ງຜັດສະ ຯລຯ ໄດ້ຮູ້ແຈ້ງສະລາຍະຕະນະ ຯລຯ ໄດ້ຮູ້ແຈ້ງນາມຮູບ ຯລຯ ໄດ້ຮູ້ແຈ້ງວິນຍານ ຯລຯ ເຮົາໄດ້ດຳເນີນຕາມທາງນັ້ນແລ້ວ ຂະນະດຳເນີນໄປໄດ້ຮູ້ແຈ້ງສັງຂານທັງຫຼາຍ ໄດ້ຮູ້ແຈ້ງຄວາມເກີດແຫ່ງສັງຂານ ໄດ້ຮູ້ແຈ້ງຄວາມດັບແຫ່ງສັງຂານ ໄດ້ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ເມື່ອໄດ້ຮູ້ແຈ້ງອະຣິຍະມັກ ມີອົງ ໘ ນັ້ນແລ້ວ ເຮົາຈຶ່ງບອກແກ່ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ

ພິກຂຸທັງຫຼາຍ ພົມມະຈັນນີ້ ຈຶ່ງໄດ້ບໍລິບູນ ກວ້າງຂວາງ ຮູ້ຈັກກັນສ່ວນຫຼາຍ ໝັ້ນຄົງດີຮອດເທວະດາ ແລະ ມະນຸດທັງຫຼາຍ ປະກາດໄດ້ດີແລ້ວ

**ນະຄະຣະສູດທີ ໕ ຈົບ**

# ໖. ສຳມະສະສູດ

## ວ່າດ້ວຍການພິຈາລະນາປັດໄຈພາຍໃນ

[໖໖] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິຄົມຂອງຊາວກຸຣຸ ຊື່ວ່າ ກຳມາດທຳມະແຄວັນກຸຣຸ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ທ່ານທັງຫຼາຍພິຈາລະນາປັດໄຈພາຍໃນກັນແດ່ບໍ?

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຖາມແນວນີ້ແລ້ວ ພິກຂຸອົງໜຶ່ງ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງ ພິຈາລະນາເຫັນປັດໄຈພາຍໃນຢູ່

ທ່ານພິຈາລະນາປັດໄຈພາຍໃນແນວໃດ?

ລຳດັບນັ້ນ ພິກຂຸອົງນັ້ນ ກໍໄດ້ທູນຖວາຍໃຫ້ຊົງຮູ້ (ແຕ່) ບໍ່ເປັນທີ່ພໍພຣະທະໄທຂອງພຣະຜູ້ມີພຣະພາກເຈົ້າ

ເມື່ອທ່ານຂາບທູນແນວນັ້ນແລ້ວ ທ່ານພຣະອານົນກໍໄດ້ຂາບທູນວ່າ ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ເຖິງເວລາທີ່ຈະຊົງສະແດງເລື້ອງນີ້ແລ້ວ ຂ້າແດ່ ພຣະສຸຄົດເຈົ້າ ເຖິງເວລາທີ່ຈະຊົງສະແດງເລື້ອງນີ້ແລ້ວ ເມື່ອພິກຂຸທັງຫຼາຍໄດ້ຟັງປັດໄຈພາຍໃນທີ່ພຣະອົງຕັດໄວ້ແລ້ວ ກໍຈັກຊົງຈຳໄວ້

ອານົນ ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດ ວ່າ

ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ເມື່ອພິຈາລະນາ ຍ່ອມພິຈາລະນາປັດໄຈ ພາຍໃນວ່າ ຊະຣາແລະມໍລະນະນີ້ໃດ ມີທຸກຫຼາຍຢ່າງ ນັບບໍ່ຖ້ວນເກີດຂຶ້ນໃນໂລກ ຊະຣາແລະມໍລະນະທີ່ເປັນທຸກນີ້ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ ເມື່ອອັນໃດມີ ຊະຣາແລະມໍລະນະຈຶ່ງມີ ເມື່ອອັນໃດບໍ່ມີ ຊະຣາແລະມໍລະນະຈຶ່ງບໍ່ມີ ທ່ານພິຈາລະນາຢູ່ ຈຶ່ງຮູ້ ຢ່າງນີ້ວ່າ ຊະຣາແລະມໍລະນະນີ້ໃດ ມີທຸກຫຼາຍຢ່າງນັບບໍ່ຖ້ວນເກີດຂຶ້ນໃນໂລກ ຊະຣາແລະມໍລະນະທີ່ເປັນທຸກນີ້ ມີອຸປະທິເປັນເຫດ ມີອຸປະທິເປັນເຫດເກີດ ມີອຸປະທິເປັນກຳເນີດ ມີອຸປະທິເປັນແດນເກີດ ເມື່ອອຸປະທິມີ ຊະຣາແລະມໍລະນະຈຶ່ງມີ ເມື່ອອຸປະທິບໍ່ມີ

ຊະຣາແລະມໍລະນະຈຶ່ງບໍ່ມີ ທ່ານຮູ້ແຈ້ງຊະຣາແລະມໍລະນະ ຮູ້ແຈ້ງຄວາມເກີດແຫ່ງຊະຣະແລະມໍລະນະ ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະ ແລະ ຮູ້ແຈ້ງປະຕິປະທາອັນເໝາະສົມທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ ແລະ ທ່ານຜູ້ປະຕິບັດແນວນັ້ນ ຊື່ວ່າ ຜູ້ມີປົກກະຕິປະພຶດຕາມທຳ ເຮົາຮຽກພິກຂຸນີ້ ວ່າ ເປັນຜູ້ປະຕິບັດເພື່ອຄວາມສິ້ນທຸກ ເພື່ອຄວາມດັບແຫ່ງຊະຣາແລະມໍລະນະໂດຍຖືກຕ້ອງທຸກປະການ

ອີກປະການໜຶ່ງ ພິກຂຸເມື່ອພິຈາລະນາ ຍ່ອມພິຈາລະນາປັດໄຈພາຍໃນວ່າ ອຸປະທິນີ້ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ ເມື່ອອັນໃດມີ ອຸປະທິຈຶ່ງມີ ເມື່ອອັນໃດບໍ່ມີ ອຸປະທິຈຶ່ງບໍ່ມີ ທ່ານພິຈາລະນາຢູ່ຈຶ່ງຮູ້ ຢ່າງນີ້ວ່າອຸປະທິມີຕັນຫາ ເປັນເຫດ ມີຕັນຫາເປັນເຫດເກີດ ມີຕັນຫາເປັນກຳເນີດ ມີຕັນຫາເປັນແດນເກີດ ເມື່ອຕັນຫາມີ ອຸປະທິຈຶ່ງມີ ເມື່ອຕັນຫາບໍ່ມີ ອຸປະທິຈຶ່ງບໍ່ມີ ທ່ານຮູ້ແຈ້ງອຸປະທິ ຮູ້ແຈ້ງຄວາມເກີດແຫ່ງອຸປະທິ ຮູ້ແຈ້ງຄວາມດັບແຫ່ງອຸປະທິ ແລະ ຮູ້ແຈ້ງປະຕິປະທາອັນເໝາະສົມທີ່ໃຫ້ເຖິງຄວາມດັບ ແຫ່ງອຸປະທິ ແລະ ທ່ານຜູ້ປະຕິບັດແນວນັ້ນ ຊື່ວ່າ ຜູ້ມີປົກກະຕິປະພຶດຕາມທຳ ເຮົາຮຽກ ພິກຂຸນີ້ວ່າ ເປັນຜູ້ປະຕິບັດເພື່ອຄວາມສິ້ນທຸກ ເພື່ອຄວາມດັບແຫ່ງອຸປະທິໂດຍຖືກຕ້ອງທຸກປະການ

ອີກປະການໜຶ່ງ ພິກຂຸເມື່ອພິຈາລະນາ ຍ່ອມພິຈາລະນາປັດໄຈພາຍໃນວ່າ ຕັນຫານີ້ເມື່ອເກີດ ຍ່ອມເກີດຂຶ້ນໃນຢູ່ໃສ ເມື່ອຕັ້ງຢູ່ ຍ່ອມຕັ້ງຢູ່ໃນຢູ່ໃສ ທ່ານພິຈາລະນາຢູ່ ຈຶ່ງຮູ້ແນວນີ້ວ່າ ຮູບທີ່ເປັນປິຍະຮູບ ເປັນສາຕະຮູບ ໃດມີຢູ່ໃນໂລກ ຕັນຫາເມື່ອເກີດຂຶ້ນຍ່ອມເກີດຂຶ້ນໃນຮູບນັ້ນ ເມື່ອຕັ້ງຢູ່ຍ່ອມຕັ້ງຢູ່ໃນຮູບນັ້ນ ກໍອັນໃດນໍ? ເປັນປິຍະຮູບ ເປັນສາຕະຮູບໃນໂລກ

ຄື ຈັກຂຸເປັນປິຍະຮູບ ເປັນສາຕະຮູບໃນໂລກ ฯລฯ ໂສຕະເປັນປິຍະຮູບເປັນສາຕະຮູບໃນໂລກ ฯລฯ ຄານະເປັນປິຍະຮູບ ເປັນສາຕະຮູບໃນໂລກ ฯລฯ ຊິວຫາເປັນປິຍະຮູບ ເປັນສາຕະຮູບໃນໂລກ ฯລฯ ກາຍເປັນປິຍະຮູບ ເປັນສາຕະຮູບໃນໂລກ ฯລฯ ມະໂນເປັນປິຍະຮູບ ເປັນສາຕະຮູບໃນໂລກ ຕັນຫານັ້ນ ເມື່ອເກີດຍ່ອມເກີດຂຶ້ນໃນມະໂນນັ້ນ ເມື່ອຕັ້ງຢູ່ຍ່ອມຕັ້ງຢູ່ໃນມະໂນນັ້ນ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດ ໄດ້ເຫັນຮູບທີ່ເປັນປິຍະຮູບ ເປັນສາຕະຮູບໃນໂລກ ໂດຍຄວາມເປັນຂອງທ່ຽງ ເປັນສຸກ ເປັນອັດຕາ ບໍ່ມີພະຍາດ ກະເສມ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າເຮັດຕັນຫາໃຫ້ຈະເລີນ ສະມະນະຫຼືພາມເຫຼົ່າໃດເຮັດຕັນຫາໃຫ້ຈະເລີນແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າເຮັດອຸປະທິໃຫ້ຈະເລີນ ສະມະນະຫຼືພາມເຫຼົ່າໃດເຮັດອຸປະທິໃຫ້ຈະເລີນແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າເຮັດທຸກໃຫ້ຈະເລີນ ສະມະນະຫຼືພາມເຫຼົ່າໃດເຮັດທຸກ

ໃຫ້ຈະເລີນ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າບໍ່ພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດແລະອຸປາຍາດ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນ ບໍ່ພົ້ນຈາກທຸກໄປໄດ້

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດ ຈັກເຫັນຮູບທີ່ເປັນປິຍະຮູບ ເປັນສາຕະຮູບໃນໂລກ ໂດຍຄວາມເປັນຂອງທ່ຽງ ເປັນສຸກ ເປັນອັດຕາ ບໍ່ມີພະຍາດ ກະເສມ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ຈັກເຮັດຕັນຫາໃຫ້ຈະເລີນ ສະມະນະຫຼືພາມເຫຼົ່າໃດ ຈັກເຮັດຕັນຫາໃຫ້ຈະເລີນ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ຈັກເຮັດອຸປະທິໃຫ້ຈະເລີນ ສະມະນະຫຼືພາມເຫຼົ່າໃດຈັກເຮັດອຸປະທິໃຫ້ຈະເລີນ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າຈັກເຮັດທຸກໃຫ້ຈະເລີນ ສະມະນະຫຼືພາມເຫຼົ່າໃດຈັກເຮັດທຸກໃຫ້ຈະເລີນ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ຈັກບໍ່ພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດແລະອຸປາຍາດ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນ ຈັກບໍ່ພົ້ນຈາກທຸກໄປໄດ້

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນ ເຫັນຮູບທີ່ເປັນປິຍະຮູບ ເປັນສາຕະຮູບໃນໂລກ ໂດຍຄວາມເປັນຂອງທ່ຽງ ເປັນສຸກ ເປັນອັດຕາ ບໍ່ມີພະຍາດ ກະເສມ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າເຮັດຕັນຫາໃຫ້ຈະເລີນ ສະມະນະຫຼືພາມເຫຼົ່າໃດເຮັດຕັນຫາ ໃຫ້ຈະເລີນ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າເຮັດອຸປະທິໃຫ້ຈະເລີນ ສະມະນະຫຼືພາມເຫຼົ່າໃດເຮັດອຸປະທິໃຫ້ຈະເລີນ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ເຮັດທຸກໃຫ້ຈະເລີນ ສະມະນະຫຼືພາມເຫຼົ່າໃດເຮັດທຸກໃຫ້ຈະເລີນ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ບໍ່ພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນບໍ່ພົ້ນຈາກທຸກ ໄປໄດ້

ປຽບຄື ໂອສຳຣິດໃສ່ສຸຣາສົມບູນດ້ວຍສີ ກິ່ນແລະຣົດ ແຕ່ໂອໃບນັ້ນໃສ່ຢາພິດ ຂະນະນັ້ນ ມີບຸຣຸດຍ່າງຜ່າຄວາມຮ້ອນອົບເອົ້າ ຈຶ່ງຮູ້ສຶກອິດເມື່ອຍ ອ່ອນແຮງ ຫິວນ້ຳຢູ່ ຄົນທັງຫຼາຍຈຶ່ງເວົ້າກັບເຂົາວ່າ ທ້າວ ໂອສຳຣິດໃສ່ສຸຣາໃບນີ້ ສົມບູນດ້ວຍສີ ກິ່ນແລະຣົດມີໄວ້ສຳລັບທ່ານ ແຕ່ວ່າມັນໃສ່ຢາພິດ ຖ້າທ່ານຕ້ອງການກໍຈົ່ງດື່ມ ຍ້ອນເມື່ອດື່ມເຂົ້າໄປແລ້ວ ສຸຣານັ້ນກໍຈັກຊຶມຊາບດ້ວຍສີແດ່ ກິ່ນແດ່ ຣົດແດ່ ເຮັດໃຫ້ທ່ານຫາຍຫິວນ້ຳກັບມາມີແຮງ ແຕ່ວ່າເມື່ອຜ່ານໄປບໍ່ດົນທ່ານຈະຕາຍ ຫຼື ທຸກເກືອບຕາຍ ຍ້ອນການດື່ມສຸຣານັ້ນ ບຸຣຸດນັ້ນບໍ່ທັນພິຈາລະນາຮອດສຸຣາໃນໂອສຳຣິດນັ້ນ ກໍຟ້າວດື່ມຈົນໝົດ ເຂົາເພິ່ງຕາຍ ຫຼື ທຸກເກືອບຕາຍ ຍ້ອນການດື່ມນັ້ນ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດ ໄດ້ເຫັນຮູບທີ່ເປັນປິຍະຮູບໃນໂລກ ຯລຯ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດ ຯລຯ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນ ເຫັນຮູບທີ່ເປັນປິຍະຮູບ ເປັນສາຕະຮູບໃນໂລກ ໂດຍຄວາມເປັນຂອງທ່ຽງ ເປັນສຸກ ເປັນອັດຕາ ບໍ່ມີພະຍາດ ກະເສມ ສະມະນະຫຼືພາມ

ເຫຼົ່ານັ້ນຊື່ວ່າ ເຮັດຕັນຫາໃຫ້ຈະເລີນ ສະມະນະຫຼືພາມເຫຼົ່າໃດເຮັດຕັນຫາໃຫ້ຈະເລີນ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ເຮັດອຸປະທິໃຫ້ຈະເລີນ ສະມະນະຫຼືພາມເຫຼົ່າໃດເຮັດອຸປະທິໃຫ້ຈະເລີນ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ເຮັດທຸກໃຫ້ຈະເລີນ ສະມະນະຫຼືພາມເຫຼົ່າໃດເຮັດທຸກໃຫ້ຈະເລີນ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ບໍ່ພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດແລະອຸປາຍາດ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນ ບໍ່ພົ້ນຈາກທຸກໄປໄດ້

ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດ ໄດ້ເຫັນຮູບທີ່ເປັນປິຍະຮູບ ເປັນສາຕະຮູບໃນໂລກ ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນອະນັຕຕາ ເປັນພະຍາດ ເປັນໄພ ສະມະໜະຫຼືພາມເຫຼົ່ານັ້ນຊື່ວ່າ ລະຕັນຫາໄດ້ແລ້ວ ສະມະນະຫຼືພາມເຫຼົ່າໃດ ລະຕັນຫາໄດ້ແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ລະອຸປະທິໄດ້ແລ້ວ ສະມະນະຫຼືພາມເຫຼົ່າໃດລະອຸປະທິໄດ້ແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ລະທຸກໄດ້ແລ້ວ ສະມະນະຫຼືພາມເຫຼົ່າໃດລະທຸກໄດ້ແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າພົ້ນໄປຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດແລະອຸປາຍາດໄດ້ແລ້ວ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນ ພົ້ນຈາກທຸກໄດ້ແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດ ຈັກເຫັນຮູບທີ່ເປັນປິຍະຮູບ ເປັນສາຕະຮູບໃນໂລກ ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ເປັນພະຍາດ ເປັນໄພສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ຈັກລະຕັນຫາໄດ້ ສະມະນະຫຼືພາມເຫຼົ່າໃດ ຈັກລະຕັນຫາໄດ້ ຯລຯ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນ ຈັກພົ້ນຈາກທຸກໄປໄດ້

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນ ເຫັນຮູບທີ່ເປັນປິຍະຮູບ ເປັນສາຕະຮູບໃນໂລກ ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ເປັນພະຍາດ ເປັນໄພ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າລະຕັນຫາໄດ້ ສະມະນະຫຼືພາມເຫຼົ່າໃດຊື່ວ່າ ລະຕັນຫາໄດ້ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ລະອຸປະທິໄດ້ ສະມະນະຫຼືພາມເຫຼົ່າໃດລະອຸປະທິໄດ້ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າລະທຸກໄດ້ ສະມະນະຫຼືພາມເຫຼົ່າໃດຊື່ວ່າ ລະທຸກໄດ້ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ພົ້ນໄປຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດໄດ້ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນ ພົ້ນຈາກທຸກໄປໄດ້

ປຽບຄື ໂອສຳຣິດໃສ່ສຸຣາສົມບູນດ້ວຍສີ ກິ່ນແລະຣົດ ແຕ່ໂອໃບນັ້ນໃສ່ຢາພິດ ຂະນະນັ້ນມີບຸຣຸດຢ່າງຜ່າຄວາມຮ້ອນອົບເອົ້າ ຮູ້ສຶກອິດເມື່ອຍ ອ່ອນແຮງ ຫິວນ້ຳມາ ຄົນທັງຫຼາຍຈຶ່ງເວົ້າກັບເຂົາວ່າ ທ້າວ ໂອສຳຣິດໃສ່ສຸຣາໃບນີ້ ສົມບູນດ້ວຍສີ ກິ່ນ ແລະ ຣົດມີໄວ້ສຳລັບທ່ານ ແຕ່ວ່າມັນໃສ່ຢາພິດ ຖ້າທ່ານຕ້ອງການກໍຈົ່ງດື່ມເທີ້ນ ຍ້ອນເມື່ອດື່ມເຂົ້າໄປແລ້ວ ສຸຣານັ້ນ ກໍຈັກຊຶມຊາບດ້ວຍສີແດ່ ກິ່ນແດ່ ຣົດແດ່ ເຮັດໃຫ້ທ່ານຫາຍຫິວນ້ຳກັບມາມີແຮງ ແຕ່ວ່າ ເມື່ອຜ່ານໄປບໍ່ດົນ ທ່ານຈະຕາຍ ຫຼື ທຸກເກືອບຕາຍ ຍ້ອນການດື່ມນັ້ນ ລຳດັບນັ້ນ ບຸຣຸດນັ້ນເພິ່ງຄິດວ່າ ຄວາມ

ຢາກສຸຣານີ້ ເຮົາອາດຈະບັນເທົາໄດ້ດ້ວຍນ້ຳດື່ມ ຟອງນ້ຳສົ້ມ ນ້ຳເຂົ້າປະສົມເກືອ ຫຼື ນ້ຳຢາດອງ ແຕ່ເຮົາຈະບໍ່ດື່ມສຸຣາທີ່ໃຫ້ປະໂຫຍດສຸກແກ່ເຮົາມາດົນນານນັ້ນ ເຂົາພິຈາລະນາໂອສຳຣິດນັ້ນແລ້ວ ກໍບໍ່ດື່ມ ຖອກຖິ້ມໄປ ເຂົາຈຶ່ງບໍ່ຕາຍ ຫຼື ທຸກເກືອບຕາຍ ຍ້ອນການດື່ມນັ້ນ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ສະມະນະຫຼືພາມເຫຼົ່າໃດ ເຫຼົ່າໜຶ່ງໃນອະດີດ ໄດ້ເຫັນຮູບທີ່ເປັນປິຍະຮູບ ເປັນສາຕະຮູບໃນໂລກ ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ເປັນພະຍາດ ເປັນໄພ ສະມະນະຫຼືພາມເຫຼົ່ານັ້ນ ຊື່ວ່າລະຕັນຫາໄດ້ແລ້ວ ສະມະນະຫຼືພາມເຫຼົ່າໃດລະຕັນຫາໄດ້ແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ລະອຸປະທິໄດ້ແລ້ວ ສະມະນະຫຼືພາມເຫຼົ່າໃດລະອຸປະທິໄດ້ແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ລະທຸກໄດ້ແລ້ວ ສະມະນະຫຼືພາມເຫຼົ່າໃດລະທຸກໄດ້ແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ພົ້ນໄປຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດໄດ້ແລ້ວ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນພົ້ນຈາກທຸກໄດ້ແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດ ຯລຯ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນ ເຫັນຮູບທີ່ເປັນປິຍະຮູບ ເປັນສາຕະຮູບໃນໂລກ ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ເປັນພະຍາດ ເປັນໄພ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ລະຕັນຫາໄດ້ ສະມະນະຫຼືພາມເຫຼົ່າໃດລະຕັນຫາໄດ້ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ລະອຸປະທິໄດ້ ສະມະນະຫຼືພາມເຫຼົ່າໃດລະອຸປະທິໄດ້ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ລະທຸກໄດ້ ສະມະນະຫຼືພາມເຫຼົ່າໃດລະທຸກໄດ້ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ພົ້ນໄປຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດໄດ້ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນ ພົ້ນຈາກທຸກໄປໄດ້

**ສຳມະສະສູດທີ ໖ ຈົບ**

# ໗. ນະລະກະລາປີສູດ

## ວ່າດ້ວຍກຳໄມ້ອໍ້

[໖໗] ສະໄໝໜຶ່ງ ທ່ານພຣະສາຣີບຸດແລະທ່ານພຣະມະຫາໂກດຖິຕະພັກຢູ່ປ່າ ອິສິປະຕະນະມະຣິຄະທາຍະວັນ ເຂດເມືອງພາຣານະສີ ເມື່ອເຖິງເວລາແລງ ທ່ານພຣະມະຫາໂກດຖິຕະອອກຈາກທີ່ຫຼີບຫຼີກ ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນກັບທ່ານພຣະສາຣີບຸດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະມະຫາໂກດຖິຕະໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ ວ່າ

ທ່ານສາຣີບຸດ ຊະຣາແລະມໍລະນະເປັນສິ່ງທີ່ຕົນເຮັດເອງ ເປັນສິ່ງທີ່ຄົນອື່ນເຮັດໃຫ້ເປັນສິ່ງທີ່ຕົນເຮັດເອງ ແລະ ເປັນສິ່ງທີ່ຄົນອື່ນເຮັດໃຫ້ ຫຼື ວ່າ ຊະຣາແລະມໍລະນະ ເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນບໍ?

ທ່ານໂກດຖິຕະ ຊະຣາແລະມໍລະນະເປັນສິ່ງທີ່ຕົນເຮັດເອງກໍບໍ່ແມ່ນ ເປັນສິ່ງທີ່ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ເປັນສິ່ງທີ່ຕົນເຮັດເອງດ້ວຍ ແລະ ເປັນສິ່ງທີ່ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ທັງຊະຣາແລະມໍລະນະເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນເປັນໄປບໍ່ໄດ້ ແຕ່ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ

ທ່ານສາຣີບຸດ ຊາດເປັນສິ່ງທີ່ຕົນເຮັດເອງ ເປັນສິ່ງທີ່ຄົນອື່ນເຮັດໃຫ້ ເປັນສິ່ງທີ່ຕົນເຮັດເອງແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ ຫຼື ວ່າ ຊາດເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນແລະຄົນອື່ນເຮັດໃຫ້ກໍບໍ່ແມ່ນບໍ?

ທ່ານໂກດຖິຕະ ຊາດເປັນສິ່ງທີ່ຕົນເຮັດເອງກໍບໍ່ແມ່ນ ເປັນສິ່ງທີ່ຄົນອື່ນເຮັດໃຫ້ກໍບໍ່ແມ່ນເປັນສິ່ງທີ່ຕົນເຮັດເອງດ້ວຍແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ທັງຊາດເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນເປັນໄປບໍ່ໄດ້ ແຕ່ຍ້ອນພົບເປັນປັດໄຈຊາດຈຶ່ງມີ

ທ່ານສາຣີບຸດ ພົບເປັນສິ່ງທີ່ຕົນເຮັດເອງ ຯລຯ ອຸປາທານ ເປັນສິ່ງທີ່ຕົນເຮັດເອງ ຯລຯ
ຕັນຫາ ເປັນສິ່ງທີ່ຕົນເຮັດເອງ ຯລຯ ເວທະນາ ເປັນສິ່ງທີ່ຕົນເຮັດເອງ ຯລຯ.
ຜັດສະ ເປັນສິ່ງທີ່ຕົນເຮັດເອງ ຯລຯ ສະລາຍະຕະນະ ເປັນສິ່ງທີ່ຕົນເຮັດເອງ ຯລຯ.

ນາມຮູບ ເປັນສິ່ງທີ່ຕົນເຮັດເອງ ເປັນສິ່ງທີ່ຄົນອື່ນເຮັດໃຫ້ ເປັນສິ່ງທີ່ຕົນເຮັດເອງ ດ້ວຍແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ ຫຼື ວ່າ ນາມຮູບເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນແລະຄົນອື່ນເຮັດໃຫ້ກໍບໍ່ແມ່ນບໍ?

ທ່ານໂກດຖິຕະ ນາມຮູບເປັນສິ່ງທີ່ຕົນເຮັດເອງກໍບໍ່ແມ່ນ ເປັນສິ່ງທີ່ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ເປັນສິ່ງທີ່ຕົນເຮັດເອງດ້ວຍແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ແລະ ນາມຮູບເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນເປັນໄປບໍ່ໄດ້ ແຕ່ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ

ທ່ານສາຣີບຸດ ວິນຍານເປັນສິ່ງທີ່ຕົນເຮັດເອງ ເປັນສິ່ງທີ່ຄົນອື່ນເຮັດໃຫ້ ເປັນສິ່ງທີ່ຕົນເຮັດເອງດ້ວຍແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ ຫຼື ວ່າ ວິນຍານເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນບໍ?

ທ່ານໂກດຖິຕະ ວິນຍານເປັນສິ່ງທີ່ຕົນເຮັດເອງກໍບໍ່ແມ່ນ ເປັນສິ່ງທີ່ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ເປັນສິ່ງທີ່ຕົນເຮັດເອງດ້ວຍແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ທັງວິນຍານເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນເປັນໄປບໍ່ໄດ້ ແຕ່ຍ້ອນນາມຮູບເປັນປັດໄຈ ວິນຍານຈຶ່ງມີ

ເຮົາເພິ່ງຮູ້ແຈ້ງພາສິດຂອງທ່ານສາຣີບຸດດຽວນີ້ເອງ

ທ່ານໂກດຖິຕະ ນາມຮູບເປັນສິ່ງທີ່ຕົນເຮັດເອງກໍບໍ່ແມ່ນ ເປັນສິ່ງທີ່ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ເປັນສິ່ງທີ່ຕົນເຮັດເອງດ້ວຍແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ທັງນາມຮູບເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນເປັນໄປບໍ່ໄດ້ ແຕ່ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ

ອັນໜຶ່ງ ຂ້ານ້ອຍເພິ່ງຮູ້ພາສິດຂອງທ່ານສາຣີບຸດດຽວນີ້ເອງ

ທ່ານໂກດຖິຕະ ວິນຍານເປັນສິ່ງທີ່ຕົນເຮັດເອງກໍບໍ່ແມ່ນ ເປັນສິ່ງທີ່ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ເປັນສິ່ງທີ່ຕົນເຮັດເອງດ້ວຍແລະເປັນສິ່ງທີ່ຄົນອື່ນເຮັດໃຫ້ກໍບໍ່ແມ່ນ ແລະວິນຍານເກີດຂຶ້ນຍ້ອນອາໄສເຫດທີ່ຕົນເຮັດເອງກໍບໍ່ແມ່ນ ແລະ ຄົນອື່ນເຮັດໃຫ້ກໍບໍ່ແມ່ນເປັນໄປບໍ່ໄດ້ ແຕ່ຍ້ອນນາມຮູບເປັນປັດໄຈ ວິນຍານຈຶ່ງມີ

ທ່ານສາຣີບຸດ ຂ້ານ້ອຍຈະເຂົ້າໃຈເນື້ອຄວາມແຫ່ງພາສິດນີ້ໄດ້ແນວໃດ?

ຖ້າເຊັ່ນນັ້ນ ຂ້ານ້ອຍຈັກປຽບທຽບໃຫ້ທ່ານຟັງ ບຸຣຸດທັງຫຼາຍຜູ້ມີຄວາມຮູ້ໃນໂລກນີ້ ຍ່ອມຮູ້ເນື້ອຄວາມແຫ່ງພາສິດໄດ້ແມ່ນດ້ວຍການປຽບທຽບ

ປຽບຄື ໄມ້ອໍ້ ໒ ກໍາ ເພິ່ງຕັ້ງຢູ່ໄດ້ຍ້ອນອາໄສກັນແລະກັນ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຍ້ອນນາມຮູບເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີ ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ປຽບຄື ໄມ້ອໍ້ທັງ ໒ ກໍານັ້ນ ຖ້າດຶງອອກກໍາໜຶ່ງ ອີກກໍາໜຶ່ງກໍລົ້ມ ຖ້າດຶງອອກອີກກໍາໜຶ່ງ ອີກກໍາໜຶ່ງກໍລົ້ມ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຍ້ອນນາມຮູບດັບ ວິນຍານຈຶ່ງດັບ ຍ້ອນວິນຍານດັບ ນາມຮູບຈຶ່ງດັບ ຍ້ອນນາມຮູບດັບ ສະລາຍະຕະນະຈຶ່ງດັບ ຍ້ອນສະລາຍະຕະນະດັບ ຜັດສະຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການຢ່າງນີ້

ທ່ານສາຣີບຸດ ສຸພາສິດຕາມທີ່ທ່ານກ່າວມານີ້ ເປັນສິ່ງໜ້າອັດສະຈັນຈິງແທ້ ບໍ່ເຄີຍຜາກົດ ຂ້ານ້ອຍຊົມຊື່ນຄຳສຸພາສິດຂອງທ່ານສາຣີບຸດຈຳນວນ ໓໖ ເລື້ອງນີ້

ທ່ານຜູ້ມີອາຍຸ ຖ້າພິກຂຸສະແດງທຳເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຊະຣາແລະມໍລະນະ ຄວນຮຽກວ່າ ພິກຂຸທັມມະກະຖຶກ ຖ້າພິກຂຸເປັນຜູ້ປະຕິບັດ ເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຊະຣາແລະມໍລະນະ ຄວນຮຽກວ່າ ພິກຂຸຜູ້ປະຕິບັດທຳສົມຄວນແກ່ທຳ ຖ້າພິກຂຸເປັນຜູ້ລຸດພົ້ນ ຍ້ອນຄວາມເບື່ອໜ່າຍ ຄາຍກຳໜັດ ດັບ ຍ້ອນບໍ່ຖືໝັ້ນຊະຣາແລະມໍລະນະ ຄວນຮຽກວ່າ ພິກຂຸຜູ້ບັນລຸນິບພານໃນປັດຈຸບັນ

ຖ້າພິກຂຸສະແດງທຳເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຊາດ ຯລຯ ພົບ ຯລຯ ອຸປາທານ ຯລຯ ຕັນຫາ ຯລຯ ເວທະນາ ຯລຯ ຜັດສະ ຯລຯ ສະລາຍະຕະນະ ຯລຯ ນາມຮູບ ຯລຯ ວິນຍານ ຯລຯ ສັງຂານທັງຫຼາຍ ຯລຯ

ຖ້າພິກຂຸສະແດງທຳ ເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບອະວິດຊາ ຄວນຮຽກວ່າ ພິກຂຸທັມມະກະຖຶກ ຖ້າພິກຂຸເປັນຜູ້ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບອະວິດຊາ ຄວນຮຽກວ່າ ພິກຂຸຜູ້ປະຕິບັດທຳສົມຄວນແກ່ທຳ ຖ້າພິກຂຸເປັນຜູ້ລຸດພົ້ນ ຍ້ອນຄວາມເບື່ອໜ່າຍ ຄາຍກຳໜັດ ດັບ ຍ້ອນບໍ່ຖືໝັ້ນອະວິດຊາ ຄວນຮຽກວ່າ ພິກຂຸຜູ້ບັນລຸນິບພານໃນປັດຈຸບັນ

**ນະລະກະລາປີສູດທີ ៧ ຈົບ**

# ໘. ໂກສຳພິສູດ

## ວ່າດ້ວຍການສົນທະນາທຳໃນເມືອງໂກສຳພິ

[໖໘] ສະໄໝໜຶ່ງ ທ່ານພຣະມຸສິລະ ທ່ານພຣະປະວິດຖະ ທ່ານພຣະນາຣະທະແລະທ່ານພຣະອານົນພັກຢູ່ໂຄສິຕາຣາມ ເຂດເມືອງໂກສຳພິ ຄັ້ງນັ້ນ ທ່ານພຣະປະວິດຖະໄດ້ຖາມທ່ານພຣະມຸສິລະ ວ່າ

ທ່ານມຸສິລະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ທ່ານມຸສິລະມີຄວາມຮູ້ສະເພາະຕົນວ່າ ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີແມ່ນບໍ?

ທ່ານພຣະມຸສິລະໄດ້ຕອບວ່າ ທ່ານປະວິດຖະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ເຮົາຮູ້ເຫັນວ່າ ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ

ທ່ານມຸສິລະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ທ່ານມຸສິລະມີຄວາມຮູ້ສະເພາະຕົນວ່າ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີບໍ ຯລຯ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ຯລຯ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຯລຯ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ ຯລຯ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຯລຯ ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ ຯລຯ ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີ ຯລຯ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ ຯລຯ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີແມ່ນບໍ?

ທ່ານປະວິດຖະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ຂ້ານ້ອຍຮູ້ເຫັນວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ

ທ່ານມຸສິລະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ທ່ານມຸສິລະມີຄວາມຮູ້ສະເພາະຕົນວ່າ ຍ້ອນຊາດດັບ ຊະຣາແລະມໍລະນະຈຶ່ງດັບແມ່ນບໍ?

ທ່ານປະວິດຖະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ຂ້ານ້ອຍຮູ້ເຫັນວ່າ ຍ້ອນຊາດດັບ ຊະຣາແລະມໍລະນະຈຶ່ງດັບ

ທ່ານມຸສິລະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ທ່ານມຸສິລະມີຄວາມຮູ້ສະເພາະຕົນວ່າ ຍ້ອນພົບດັບ ຊາດຈຶ່ງດັບບໍ ຯລຯ ຍ້ອນອຸປາທານດັບ ພົບຈຶ່ງດັບ ຯລຯ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ຯລຯ ຍ້ອນເວທະນາດັບ ຕັນຫາຈຶ່ງດັບ ຯລຯ ຍ້ອນຜັດສະດັບ ເວທະນາຈຶ່ງດັບ ຯລຯ ຍ້ອນສະລາຍະຕະນະດັບ ຜັດສະຈຶ່ງດັບ ຯລຯ ຍ້ອນນາມຮູບດັບ ສະລາຍະຕະນະຈຶ່ງດັບ ຯລຯ ຍ້ອນວິນຍານດັບ ນາມຮູບຈຶ່ງດັບ ຯລຯ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ຯລຯ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບແມ່ນບໍ?

ທ່ານປະວິດຖະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດ ໄວ້ແລ້ວ ຂ້ານ້ອຍຮູ້ເຫັນວ່າ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ

ທ່ານມຸສິລະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ທ່ານມຸສິລະມີຄວາມຮູ້ສະເພາະຕົນວ່າ ຄວາມດັບແຫ່ງພົບເປັນນິບພານແມ່ນບໍ?

ທ່ານປະວິດຖະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ຂ້ານ້ອຍຮູ້ເຫັນວ່າ ຄວາມດັບແຫ່ງພົບເປັນນິບພານ ຖ້າເຊັ່ນນັ້ນ ທ່ານມຸສິລະກໍເປັນພຣະອະຣະຫັນຕະຂີນາສົບແລ້ວແມ່ນບໍ?

ເມື່ອທ່ານພຣະປະວິດຖະກ່າວແນວນີ້ແລ້ວ ທ່ານພຣະມຸສິລະໄດ້ມິດຢູ່

ລຳດັບນັ້ນ ທ່ານພຣະນາຣະທະໄດ້ກ່າວກັບທ່ານພຣະປະວິດຖະວ່າ ດີແລ້ວ ທ່ານປະວິດຖະ ຂ້ານ້ອຍເພິ່ງໄດ້ບັນຫານີ້ ທ່ານຈົ່ງຖາມບັນຫານີ້ເທີ້ນ ຂ້ານ້ອຍຈະຕອບບັນຫານີ້ແກ່ທ່ານ

ທ່ານນາຣະທະໄດ້ບັນຫານີ້ ຂ້ານ້ອຍ ຈະຖາມບັນຫານີ້ກັບທ່ານ ທ່ານຈົ່ງຕອບບັນຫານີ້ແກ່ຂ້ານ້ອຍ

ທ່ານນາຣະທະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ທ່ານນາຣະທະມີຄວາມຮູ້ສະເພາະຕົນວ່າ ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີແມ່ນບໍ?

ທ່ານປະວິດຖະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ຂ້ານ້ອຍຮູ້ເຫັນວ່າ ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ

ທ່ານນາຣະທະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ທ່ານນາຣະທະມີຄວາມຮູ້ສະເພາະຕົນວ່າ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ໆລໆ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີແມ່ນບໍ?

ທ່ານປະວິດຖະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ຂ້ານ້ອຍຮູ້ເຫັນວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ

ທ່ານນາຣະທະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ທ່ານນາຣະທະມີຄວາມຮູ້ສະເພາະຕົນວ່າ ຍ້ອນຊາດດັບ ຊະຣາແລະມໍລະນະຈຶ່ງດັບແມ່ນບໍ?

ທ່ານປະວິດຖະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ຂ້ານ້ອຍ ຮູ້ເຫັນວ່າ ຍ້ອນຊາດດັບ ຊະຣາແລະມໍລະນະຈຶ່ງດັບ

ທ່ານນາຣະທະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ທ່ານນາຣະທະມີຄວາມຮູ້ສະເພາະຕົນວ່າ ຍ້ອນພົບດັບ ຊາດຈຶ່ງດັບບໍ ຯລຯ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບແມ່ນບໍ?

ທ່ານປະວິດຖະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ຂ້ານ້ອຍຮູ້ເຫັນວ່າ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ

ທ່ານນາຣະທະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ທ່ານນາຣະທະມີຄວາມຮູ້ສະເພາະຕົນວ່າ ຄວາມດັບແຫ່ງພົບເປັນນິບພານແມ່ນບໍ?

ທ່ານປະວິດຖະ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ຂ້ານ້ອຍຮູ້ເຫັນວ່າ ຄວາມດັບແຫ່ງພົບເປັນນິບພານ

ຖ້າເຊັ່ນນັ້ນ ທ່ານນາຣະທະກໍເປັນພຣະອະຣະຫັນຕະຂີນາສົບລະຕິ

ທ່ານຜູ້ມີອາຍຸ ຂໍ້ວ່າ ຄວາມດັບແຫ່ງພົບເປັນນິບພານ ຂ້ານ້ອຍເຫັນດີດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ແຕ່ຂ້ານ້ອຍບໍ່ແມ່ນພຣະອະຣະຫັນຕະຂີນາສົບ ປຽບຄື ນ້ຳສ້າງໃນທາງກັນດານທີ່ນ້ຳສ້າງນັ້ນບໍ່ມີເຊືອກ ບໍ່ມີຄັນໂດ່ງ ທັນໃດນັ້ນ ມີບຸຣຸດຍ່າງຜ່າຄວາມຮ້ອນອົບເອົ້າອິດເມື່ອຍອ່ອນແຮງຫິວນ້ຳມາ ເຂົາແນມເບິ່ງນ້ຳສ້າງນັ້ນ ກໍຮູ້ວ່າ ມີນ້ຳ ແຕ່ສຳຜັດດ້ວຍກາຍບໍ່ໄດ້

ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຂໍ້ວ່າ ຄວາມດັບແຫ່ງພົບເປັນນິບພານ ຂ້ານ້ອຍກໍເຫັນດີດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ແຕ່ຂ້ານ້ອຍບໍ່ແມ່ນພຣະອະຣະຫັນຕະຂີນາສົບ

ເມື່ອທ່ານພຣະນາຣະທະກ່າວແນວນີ້ແລ້ວ ທ່ານພຣະອານົນໄດ້ຖາມພຣະປະວິດຖະວ່າ ທ່ານພຣະປະວິດຖະມັກເວົ້າແນວນີ້ ທ່ານເວົ້າອັນໃດກັບທ່ານພຣະນາຣະທະໄວ້ແດ່

ທ່ານອານົນ ຂ້ານ້ອຍມັກເວົ້າແນວນີ້ ຂ້ານ້ອຍບໍ່ໄດ້ເວົ້າອັນໃດກັບທ່ານພຣະນາຣະທະນອກຈາກກັນລະຍານະທໍາ ນອກຈາກກຸສົນທໍາ

**ໂກສໍາພິສູດທີ ໘ ຈົບ**

# ໙. ອຸປະຍັນຕິສູດ

## ວ່າດ້ວຍນໍ້າຂຶ້ນນໍ້າລົງ

[໖໙] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ເມື່ອມະຫາສະມຸດນໍ້າຂຶ້ນ ກໍເຮັດໃຫ້ແມ່ນໍ້າໃຫຍ່ຂຶ້ນຕາມ ແມ່ນໍ້າໃຫຍ່ເມື່ອຂຶ້ນກໍເຮັດໃຫ້ແມ່ນໍ້ານ້ອຍຂຶ້ນຕາມ ແມ່ນໍ້ານ້ອຍເມື່ອຂຶ້ນກໍເຮັດໃຫ້ໜອງໃຫຍ່ຂຶ້ນຕາມ ໜອງໃຫຍ່ເມື່ອຂຶ້ນກໍເຮັດໃຫ້ໜອງນ້ອຍຂຶ້ນຕາມ ສັນໃດ

ອະວິດຊາເມື່ອເກີດຂຶ້ນກໍເຮັດໃຫ້ສັງຂານທັງຫຼາຍເກີດຂຶ້ນຕາມ ສັງຂານທັງຫຼາຍເມື່ອເກີດຂຶ້ນກໍເຮັດໃຫ້ວິນຍານເກີດຂຶ້ນຕາມ ວິນຍານເມື່ອເກີດຂຶ້ນກໍເຮັດໃຫ້ນາມຮູບເກີດຂຶ້ນຕາມ ນາມຮູບເມື່ອເກີດຂຶ້ນກໍເຮັດໃຫ້ສະລາຍະຕະນະເກີດຂຶ້ນຕາມ ສະລາຍະຕະນະເມື່ອເກີດຂຶ້ນກໍເຮັດໃຫ້ຜັດສະເກີດຂຶ້ນຕາມ ຜັດສະເມື່ອເກີດຂຶ້ນກໍເຮັດໃຫ້ເວທະນາເກີດຂຶ້ນຕາມ ເວທະນາເມື່ອເກີດຂຶ້ນກໍເຮັດໃຫ້ຕັນຫາເກີດຂຶ້ນຕາມ ຕັນຫາເມື່ອເກີດຂຶ້ນກໍເຮັດໃຫ້ອຸປາທານເກີດຂຶ້ນຕາມ ອຸປາທານເມື່ອເກີດຂຶ້ນກໍເຮັດໃຫ້ພົບເກີດຂຶ້ນຕາມ ພົບເມື່ອເກີດຂຶ້ນກໍເຮັດໃຫ້ຊາດເກີດຂຶ້ນຕາມ ຊາດເມື່ອເກີດຂຶ້ນກໍເຮັດໃຫ້ຊະຣາແລະມໍລະນະເກີດຂຶ້ນຕາມ ຄືກັນສັນນັ້ນ

ເມື່ອມະຫາສະມຸດນໍ້າລົງກໍເຮັດໃຫ້ແມ່ນໍ້າໃຫຍ່ລົງຕາມ ແມ່ນໍ້າໃຫຍ່ເມື່ອລົງກໍເຮັດໃຫ້ແມ່ນໍ້ານ້ອຍລົງຕາມ ແມ່ນໍ້ານ້ອຍເມື່ອລົງກໍເຮັດໃຫ້ໜອງໃຫຍ່ລົງຕາມ ໜອງໃຫຍ່ເມື່ອລົງກໍເຮັດໃຫ້ໜອງນ້ອຍ ລົງຕາມ ສັນໃດ

ອະວິດຊາເມື່ອບໍ່ເກີດຂຶ້ນ ກໍເຮັດໃຫ້ສັງຂານທັງຫຼາຍບໍ່ເກີດຂຶ້ນຕາມ ສັງຂານທັງຫຼາຍເມື່ອບໍ່ເກີດຂຶ້ນກໍເຮັດໃຫ້ວິນຍານບໍ່ເກີດຂຶ້ນຕາມ ວິນຍານເມື່ອບໍ່ເກີດຂຶ້ນກໍເຮັດໃຫ້ນາມຮູບບໍ່ເກີດຂຶ້ນຕາມ ນາມຮູບເມື່ອບໍ່ເກີດຂຶ້ນກໍເຮັດໃຫ້ສະລາຍະຕະນະບໍ່ເກີດຂຶ້ນຕາມ ສະລາຍະຕະນະເມື່ອບໍ່ເກີດຂຶ້ນກໍເຮັດໃຫ້ຜັດສະບໍ່ເກີດຂຶ້ນຕາມ ຜັດສະເມື່ອບໍ່ເກີດຂຶ້ນກໍເຮັດໃຫ້ເວທະນາບໍ່ເກີດຂຶ້ນຕາມ ເວທະນາເມື່ອບໍ່ເກີດຂຶ້ນກໍເຮັດໃຫ້ຕັນຫາບໍ່ເກີດຂຶ້ນຕາມ ຕັນຫາເມື່ອບໍ່ເກີດຂຶ້ນກໍເຮັດໃຫ້ອຸປາທານບໍ່ເກີດຂຶ້ນຕາມ ອຸປາທານເມື່ອບໍ່ເກີດຂຶ້ນກໍເຮັດໃຫ້ພົບບໍ່ເກີດຂຶ້ນຕາມ ພົບເມື່ອບໍ່ເກີດຂຶ້ນ ກໍເຮັດໃຫ້ຊາດບໍ່ເກີດຂຶ້ນຕາມ ຊາດເມື່ອບໍ່ເກີດຂຶ້ນກໍເຮັດໃຫ້ຊະຣາແລະມໍລະນະບໍ່ເກີດຂຶ້ນຕາມ ຄືກັນສັນນັ້ນ

**ອຸປະຍັນຕິສູດທີ ໙ ຈົບ**

## ໑໐. ສຸສິມະປະຣິບພາຊະກະສູດ

### ວ່າດ້ວຍສຸສິມປະຣິພາຊົກ

[໗໐] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດເມືອງຣາຊະຄຶ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າເປັນຜູ້ທີ່ເທວະດາ ແລະ ມະນຸດສັກກາຣະເຄົາລົບ ນັບຖື ບູຊາ ປະພຶດອ່ອນນ້ອມ ຊຶ່ງໄດ້ຮັບຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ ແມ່ນພິກຂຸສົງກໍເປັນຜູ້ທີ່ເທວະດາ ແລະ ມະນຸດສັກກາຣະ ເຄົາລົບນັບຖື ບູຊາ ປະພຶດອ່ອນນ້ອມ ໄດ້ຮັບຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ ແຕ່ພວກອັນຍະເດຍຣະຖີປະຣິພາຊົກ ເປັນຜູ້ທີ່ເທວະດາແລະມະນຸດບໍ່ສັກກາຣະບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ບໍ່ປະພຶດອ່ອນນ້ອມ ບໍ່ໄດ້ຮັບຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ

ສະໄໝນັ້ນ ສຸສິມປະຣິພາຊົກພັກຢູ່ເມືອງຣາດຊະຄຶ ກັບບໍລິສັດປະຣິພາຊົກຈຳນວນຫຼາຍຄັ້ງນັ້ນ ບໍລິສັດທັງຫຼາຍຂອງສຸຊິມະປະຣິພາຊົກໄດ້ກ່າວກັບສຸສິມປະຣິພາຊົກ ດັ່ງນີ້ວ່າ

ມາເທີ້ນທ່ານສຸຊິມະ ທ່ານຈົ່ງປະພຶດພົມມະຈັນໃນສຳນັກພຣະສະມະນະໂຄດົມ ທ່ານຮຽນທຳແລ້ວ ເພິ່ງບອກສອນພວກຂ້າພະເຈົ້າ ເມື່ອພວກຂ້າພະເຈົ້າຮຽນທຳນັ້ນແລ້ວ ຈັກບອກແກ່ພວກຄະຫຼືຫັດ ເມື່ອເປັນເຊັ່ນນັ້ນ ແມ່ນພວກເຮົາກໍຈັກເປັນຜູ້ທີ່ເທວະດາ ແລະ ມະນຸດສັກກາຣະເຄົາລົບ ນັບຖື ບູຊາ ປະພຶດອ່ອນນ້ອມ ຈັກໄດ້ຮັບຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ

ສຸສີມປະຣິພາຊົກ ຮັບຄຳບໍລິສັດຂອງຕົນແລ້ວ ເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນກັບທ່ານພຣະອານົນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະອານົນດັ່ງນີ້ ວ່າ

ທ່ານພຣະອານົນ ຂ້ານ້ອຍປາຖະໜາຈະປະພຶດພົມມະຈັນໃນທຳວິໄນນີ້

ຄັ້ງນັ້ນ ທ່ານພຣະອານົນ ພາສຸສີມປະຣິພາຊົກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ສຸສີມະປະຣິພາຊົກນີ້ກ່າວວ່າ ທ່ານພຣະອານົນ ຂ້ານ້ອຍ ປາຖະໜາຈະປະພຶດພົມມະຈັນໃນທຳວິໄນນີ້

ອານົນ ຖ້າແນວນັ້ນ ທ່ານຈົ່ງໃຫ້ສຸສີມະບວດເທີ້ນ

ສຸສີມະປະຣິພາຊົກ ໄດ້ບັນພະຊາອຸປະສົມບົດໃນສຳນັກພຣະຜູ້ມີພຣະພາກເຈົ້າແລ້ວ

ສະໄໝນັ້ນ ພິກຂຸຈຳນວນຫຼາຍ ພາກັນອວດອ້າງອະຣະຫັດຕະຜົນໃນສຳນັກພຣະຜູ້ມີພຣະພາກເຈົ້າ ວ່າ

ຂ້າພຣະອົງທັງຫຼາຍຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ທ່ານສຸສີມະໄດ້ຟັງມາວ່າ ຂ່າວວ່າ ພິກຂຸຈຳນວນຫຼາຍອວດອ້າງອະຣະຫັດຕະຜົນໃນສຳນັກພຣະຜູ້ມີພຣະພາກເຈົ້າ ວ່າ ຂ້າພຣະອົງທັງຫຼາຍຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ຄັ້ງນັ້ນ ທ່ານສຸສີມະເຂົ້າໄປຫາພິກຂຸເຫຼົ່ານັ້ນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມພິກຂຸເຫຼົ່ານັ້ນວ່າ ຂ່າວວ່າທ່ານທັງຫຼາຍອວດອ້າງອະຣະຫັດຕະຜົນໃນສຳນັກພຣະຜູ້ມີພຣະພາກເຈົ້າວ່າ ຂ້າພຣະອົງທັງຫຼາຍ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ແມ່ນບໍ?

ແມ່ນແລ້ວ ທ່ານຜູ້ມີອາຍຸ

ທ່ານຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍຮູ້ເຫັນຢູ່ແນວນີ້ ຍ່ອມສະແດງລິດໄດ້ຫຼາຍແນວ ຄືຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດກໍໄດ້ຫຼື

ໃຫ້ຫາຍໄປກໍໄດ້ ຊອດຝາ ຊອດກຳແພງ (ແລະ) ພູໄປໄດ້ບໍ່ຕິດຂັດ ຄື ໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນ ຫຼື ມຸດລົງໃນແຜ່ນດິນຄືໄປໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນດວງອາທິດ ອັນມີລິດຫຼາຍມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມໂລກກໍໄດ້ ແມ່ນບໍ?

ບໍ່ແມ່ນແນວນັ້ນ ທ່ານຜູ້ມີອາຍຸ

ທ່ານທັງຫຼາຍ ຮູ້ເຫັນຢູ່ແນວນີ້ ຍ່ອມໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບແລະສຽງມະນຸດທັງທີ່ຢູ່ໄກແລະໃກ້ ດ້ວຍຫູທິບອັນບໍລິສຸດເໜືອມະນຸດແມ່ນບໍ?

ບໍ່ແມ່ນແນວນັ້ນ ທ່ານຜູ້ມີອາຍຸ

ທ່ານທັງຫຼາຍ ຮູ້ເຫັນຢູ່ແນວນີ້ ຍ່ອມກຳນົດຮູ້ຈິດຂອງສັດແລະຄົນອື່ນດ້ວຍຈິດຂອງຕົນ ຄືຈິດມີຣາຄະ ກໍຮູ້ແຈ້ງວ່າຈິດມີຣາຄະ ຫຼື ຈິດປາສະຈາກຣາຄະ ກໍຮູ້ແຈ້ງວ່າຈິດປາສະຈາກຣາຄະ ຈິດມີໂທສະ ກໍຮູ້ແຈ້ງວ່າຈິດມີໂທສະ ຫຼື ຈິດປາສະຈາກໂທສະ ກໍຮູ້ແຈ້ງວ່າຈິດປາສະຈາກໂທສະ ຈິດມີໂມຫະ ກໍຮູ້ແຈ້ງວ່າຈິດມີໂມຫະ ຫຼື ຈິດປາສະຈາກໂມຫະ ກໍຮູ້ແຈ້ງວ່າຈິດປາສະຈາກໂມຫະ ຈິດຫົດຫູ່ ກໍຮູ້ແຈ້ງວ່າຈິດຫົດຫູ່ ຫຼື ຈິດຟຸ້ງຊ່ານ ກໍຮູ້ແຈ້ງວ່າຈິດຟຸ້ງຊ່ານ ຈິດເປັນມະຫັກຄະຕະ ກໍຮູ້ແຈ້ງວ່າຈິດເປັນມະຫັກຄະຕະ ຫຼື ຈິດບໍ່ເປັນມະຫັກຄະຕະ ກໍຮູ້ແຈ້ງວ່າຈິດບໍ່ເປັນມະຫັກຄະຕະ ຈິດມີຈິດອື່ນຍິ່ງກວ່າ ກໍຮູ້ແຈ້ງວ່າຈິດມີຈິດອື່ນຍິ່ງກວ່າ ຈິດບໍ່ມີຈິດອື່ນຍິ່ງກວ່າ ກໍຮູ້ແຈ້ງວ່າຈິດບໍ່ມີຈິດອື່ນຍິ່ງກວ່າ ຈິດເປັນສະມາທິ ກໍຮູ້ແຈ້ງວ່າຈິດເປັນສະມາທິ ຫຼື ຈິດບໍ່ເປັນສະມາທິ ກໍຮູ້ແຈ້ງວ່າຈິດບໍ່ເປັນສະມາທິ ຈິດລຸດພົ້ນ ກໍຮູ້ແຈ້ງວ່າຈິດລຸດພົ້ນ ຫຼື ຈິດບໍ່ລຸດພົ້ນ ກໍຮູ້ແຈ້ງ ວ່າຈິດບໍ່ລຸດພົ້ນແມ່ນບໍ?

ບໍ່ແມ່ນແນວນັ້ນ ທ່ານຜູ້ມີອາຍຸ

ທ່ານທັງຫຼາຍຮູ້ເຫັນຢູ່ແນວນີ້ ຍ່ອມຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບເປັນອັນຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບເປັນຈຳນວນຫຼາຍແດ່ວ່າ ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ຈຸຕິ ຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ຈຶ່ງມາເກີດໃນພົບນີ້ ທ່ານທັງຫຼາຍຍ່ອມຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດ ຢ່າງນີ້ແມ່ນບໍ?

ບໍ່ແມ່ນແນວນັ້ນ ທ່ານຜູ້ມີອາຍຸ

ທ່ານທັງຫຼາຍຮູ້ເຫັນຢູ່ແນວນີ້ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ ທ່ານຜູ້ຈະເລີນທັງຫຼາຍ ໝູ່ສັດທີ່ປະກອບກາຍ ທຸດຈະຣິດ ວະຈີທຸດຈະຣິດ ແລະ ມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະ ມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປບັງເກີດໃນສຸກຄະຕິໂລກສະຫວັນ ທ່ານທັງຫຼາຍ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງໝູ່ສັດຜູ້ເປັນໄປຕາມກຳ ຢ່າງນີ້ແມ່ນບໍ?

ບໍ່ແມ່ນແນວນັ້ນ ທ່ານຜູ້ມີອາຍຸ

ທ່ານທັງຫຼາຍ ຮູ້ເຫັນຢູ່ແນວນີ້ ຍ່ອມຖືກຕ້ອງອາຣຸບປະວິໂມກອັນສະງົບກ້າວລ່ວງຮູບທັງຫຼາຍ ໄດ້ດ້ວຍນາມກາຍຢູ່ແມ່ນບໍ?

ບໍ່ແມ່ນແນວນັ້ນ ທ່ານຜູ້ມີອາຍຸ

ບັດນີ້ ຄຳຕອບນີ້ ແລະ ການບໍ່ເຂົ້າເຖິງທຳເຫຼົ່ານີ້ ມີຢູ່ໃນເລື້ອງນີ້ ເລື້ອງນີ້ເປັນແນວໃດກັນແທ້?

ທ່ານສຸຊິມະ ພວກຂ້ານ້ອຍລຸດພົ້ນໄດ້ດ້ວຍປັນຍາ

ຂ້ານ້ອຍ ບໍ່ເຂົ້າໃຈເນື້ອຄວາມແຫ່ງຄຳທີ່ທ່ານທັງຫຼາຍກ່າວໄວ້ ໂດຍຫຍໍ້ນີ້ ໄດ້ໂດຍພິດສະດານ ຂໍໂອກາດ ຂໍທ່ານທັງຫຼາຍຈົ່ງກ່າວທໍ່ທີ່ຂ້າພະເຈົ້າຈະເຂົ້າໃຈເນື້ອຄວາມແຫ່ງຄຳທີ່ທ່ານທັງຫຼາຍກ່າວໂດຍຫຍໍ້ນີ້ໄດ້ໂດຍພິດສະດານເທີ້ນ

ທ່ານຈະເຂົ້າໃຈບໍກໍຕາມ ແຕ່ພວກຂ້ານ້ອຍກໍລຸດພົ້ນໄດ້ດ້ວຍປັນຍາ

ຄັ້ງນັ້ນ ທ່ານສຸສີມະລຸກຂຶ້ນຈາກອາສະນະແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນຄຳທີ່ຕົນສົນທະນາກັບພິກຂຸເຫຼົ່ານັ້ນທັງໝົດ ແດ່ພຣະຜູ້ມີພຣະພາກເຈົ້າແລ້ວ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ ສຸສີມະ ທຳມະຖິຕິຍານເກີດກ່ອນ ນິບພານຍານເກີດພາຍຫຼັງ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ເຂົ້າໃຈເນື້ອຄວາມແຫ່ງພຣະດຳຣັດທີ່ພຣະອົງຕັດໂດຍຫຍໍ້ນີ້ໂດຍພິດສະດານໄດ້ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດຕັດໂດຍປະການທີ່ຂ້າພຣະອົງຈະເພິ່ງເຂົ້າໃຈເນື້ອຄວາມແຫ່ງພຣະດຳຣັດ ທີ່ພຣະອົງຕັດໂດຍຫຍໍ້ນີ້ໄດ້ໂດຍພິດສະດານດ້ວຍເທີ້ນ

ສຸສີມະ ທ່ານຈະເຂົ້າໃຈບໍກໍຕາມ ຄວາມຈິງທຳມະຖິຕິຍານເກີດກ່ອນ ນິບພານຍານເກີດພາຍຫຼັງ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງ ຫຼື ບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ
ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ຫຼື ເປັນສຸກ?
ເປັນທຸກ ຂ້ານ້ອຍ
ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ເວທະນາທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ສັນຍາທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ
ສັງຂານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນ ສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ສຸສິມະ ຍ້ອນເຫດນັ້ນ ຮູບແນວໃດແນວໜຶ່ງທີ່ເປັນອະດີດ ອະນາຄົດແລະປັດຈຸບັນ ເປັນໄປພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ຢູ່ໄກຫຼືຢູ່ໃກ້ ຮູບທັງໝົດນັ້ນທ່ານເພິ່ງເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາແນວໃດແນວໜຶ່ງທີ່ເປັນອະດີດ ອະນາຄົດແລະປັດຈຸບັນ ເປັນໄປພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ຢູ່ໄກຫຼືຢູ່ໃກ້ ເວທະນາທັງໝົດນັ້ນ ທ່ານເພິ່ງເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ສັນຍາແນວໃດແນວໜຶ່ງ ຯລຯ

ສັງຂານແນວໃດແນວໜຶ່ງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ເປັນໄປພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ຢູ່ໄກຫຼືຢູ່ໃກ້ ສັງຂານທັງໝົດນັ້ນ ທ່ານເພິ່ງເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ວິນຍານແນວໃດແນວໜຶ່ງທີ່ເປັນອະດີດ ອະນາຄົດແລະປັດຈຸບັນ ເປັນໄປພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ຢູ່ໄກຫຼືຢູ່ໃກ້ ວິນຍານທັງໝົດນັ້ນ ທ່ານເພິ່ງເຫັນດ້ວຍປັນຍາໂດຍຖືກຕ້ອງຕາມຄວາມເປັນຈິງວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ສຸສິມະ ອະຣິຍະສາວົກຜູ້ໄດ້ສະດັບ ເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ແມ່ນໃນເວທະນາ ແມ່ນໃນສັນຍາ ແມ່ນໃນສັງຂານ ແມ່ນໃນວິນຍານ ເມື່ອເບື່ອໜ່າຍ ຍ່ອມຄາຍກຳໜັດຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດ ສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ທ່ານເຫັນວ່າ ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີແມ່ນບໍ?
ເປັນແນວນັ້ນ ຂ້ານ້ອຍ

ທ່ານເຫັນວ່າ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີແມ່ນບໍ?
ເປັນແນວນັ້ນ ຂ້ານ້ອຍ

ທ່ານເຫັນວ່າ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີແມ່ນບໍ?
ເປັນແນວນັ້ນ ຂ້ານ້ອຍ

ທ່ານເຫັນວ່າ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີແມ່ນບໍ?
ເປັນແນວນັ້ນ ຂ້ານ້ອຍ

ສຸສີມະ ທ່ານເຫັນວ່າ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີບໍ ฯລฯ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ฯລฯ ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ ฯລฯ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ฯລฯ ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີ ฯລฯ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ ฯລฯ. ທ່ານເຫັນວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີແມ່ນບໍ?

ເປັນແນວນັ້ນ ຂ້ານ້ອຍ

ທ່ານເຫັນວ່າ ຍ້ອນຊາດດັບ ຊະຣາແລະມໍລະນະຈຶ່ງດັບແມ່ນບໍ?
ເປັນແນວນັ້ນ ຂ້ານ້ອຍ

ທ່ານເຫັນວ່າ ຍ້ອນພົບດັບ ຊາດຈຶ່ງດັບແມ່ນບໍ?
ເປັນແນວນັ້ນ ຂ້ານ້ອຍ

ສຸສີມະ ທ່ານເຫັນວ່າ ຍ້ອນອຸປາທານດັບ ພົບຈຶ່ງດັບ ฯລฯ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ฯລฯ ຍ້ອນເວທະນາດັບ ຕັນຫາຈຶ່ງດັບ ฯລฯ ຍ້ອນຜັດສະດັບ ເວທະນາຈຶ່ງດັບ ฯລฯ ຍ້ອນສະລາຍະຕະນະດັບ ຜັດສະຈຶ່ງດັບ ฯລฯ ຍ້ອນນາມຮູບດັບ ສະລາຍະຕະນະຈຶ່ງດັບ ฯລฯ ຍ້ອນ ວິນຍານດັບ ນາມຮູບຈຶ່ງດັບ ฯລฯ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ฯລฯ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບແມ່ນບໍ?

ເປັນແນວນັ້ນ ຂ້ານ້ອຍ

ສຸສີມະ ທ່ານຮູ້ເຫັນຢູ່ແນວນີ້ ຍ່ອມສະແດງລິດໄດ້ຫຼາຍແນວ ຄືຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດກໍໄດ້ຫຼືໃຫ້ຫາຍໄປ ກໍໄດ້

ຊອດຝາ ຊອດກຳແພງ (ແລະ)ພູໄປໄດ້ບໍ່ຕິດຂັດຄືໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນຫຼືມຸດລົງໃນແຜ່ນດິນຄືໄປໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກຄືຍ່າງເທິງແຜ່ນດິນ ກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນ ດວງອາທິດ ອັນມີລິດຫຼາຍມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມໂລກ ກໍໄດ້ແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານຮູ້ເຫັນຢູ່ແນວນີ້ ຍ່ອມໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບແລະສຽງມະນຸດ ທັງທີ່ຢູ່ໄກແລະໃກ້ ດ້ວຍຫູທິບອັນບໍລິສຸດເໜືອມະນຸດແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານຮູ້ເຫັນຢູ່ແນວນີ້ ຍ່ອມກຳນົດຮູ້ຈິດຂອງສັດແລະຄົນອື່ນດ້ວຍຈິດຂອງຕົນ ຄື ຈິດມີຣາຄະ ກໍຮູ້ແຈ້ງວ່າ ຈິດມີຣາຄະ ຯລຯ ຈິດບໍ່ລຸດພົ້ນ ກໍຮູ້ແຈ້ງວ່າ ຈິດບໍ່ລຸດພົ້ນແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານຮູ້ເຫັນຢູ່ແນວນີ້ ຍ່ອມຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ຯລຯ ຍ່ອມຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດ ຢ່າງນີ້ແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານຮູ້ເຫັນຢູ່ແນວນີ້ ຍ່ອມເຫັນໝູ່ສັດຜູ້ກຳລັງຈຸຕິ ຯລຯ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງໝູ່ສັດຜູ້ເປັນໄປຕາມກຳຢ່າງນີ້ແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານຮູ້ເຫັນຢູ່ແນວນີ້ ຍ່ອມຖືກຕ້ອງອາຣຸບປະວິໂມກ ອັນສະຫງົບກ້າວລ່ວງຣູບທັງຫຼາຍໄດ້ ດ້ວຍນາມກາຍຢູ່ແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ສຸສິມະ ບັດນີ້ ຄຳຕອບນີ້ ແລະ ການບໍ່ເຂົ້າເຖິງທຳເຫຼົ່ານີ້ ມີຢູ່ໃນເລື້ອງນີ້ ເລື້ອງນີ້ເປັນແນວໃດກັນແທ້

ລຳດັບນັ້ນ ທ່ານພຣະສຸຊິມະໄດ້ໝອບລົງແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ໂທດໄດ້ຕົກເຖິງຂ້າພຣະອົງ ຍ້ອນຄວາມ

ໂງ່ຈ້າເບົາປັນຍາ ຂ້າພຣະອົງບວດລັກທຳໃນທຳວິໄນທີ່ພຣະອົງຕັດໄວ້ດີແລ້ວຢ່າງນີ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງຮັບໂທດຂອງຂ້າພຣະອົງໂດຍຄວາມເປັນໂທດ ເພື່ອຄວາມສັງລວມຕໍ່ໄປດ້ວຍເທີ້ນ ຂ້ານ້ອຍ

ສຸສີມະ ໂທດໄດ້ຕົກເຖິງທ່ານ ຍ້ອນຄວາມໂງ່ຈ້າເບົາປັນຍາ ທ່ານບວດລັກທຳໃນທຳວິໄນທີ່ເຮົາກ່າວໄວ້ດີແລ້ວ ຢ່າງນີ້ ປຽບຄື ຣາດຊະບຸຣຸດທັງຫຼາຍ ຈັບໂຈນຜູ້ປະພຶດຊົ່ວໄດ້ແລ້ວຈຶ່ງທູນສະແດງແດ່ພຣະຣາຊາວ່າ ຂໍເດຊະ ຜູ້ນີ້ປະພຶດຊົ່ວຕໍ່ພຣະອົງ ຂໍຈົ່ງຊົງລົງພຣະອາຍາຕາມທີ່ຊົງພຣະປະສົງແກ່ໂຈນຜູ້ນີ້ເທີ້ນ ພຣະຣາຊາ ຮັບສັ່ງຣາດຊະບຸຣຸດຜູ້ນັ້ນວ່າ ທ່ານທັງຫຼາຍຈົ່ງໄປເອົາເຊືອກທີ່ໜຽວມັດບຸຣຸດນີ້ໄຂວ້ຫຼັງໃຫ້ແໜ້ນ ແລ້ວເອົາມີດແຖແຖຫົວ ແຫ່ປະຈານໄປຕາມຖະໜົນ ຕາມທາງສີ່ແຍກ ລັ່ນຄ້ອງ ກອງນຳອອກໄປທາງປະຕູດ້ານທິດທັກຂິນ (ທິດໃຕ້) ແລ້ວຈຶ່ງຕັດຫົວທາງດ້ານທິດທັກຂິນຂອງໂຕເມືອງ ຣາດຊະບຸຣຸດທັງຫຼາຍ ກໍເອົາເຊືອກທີ່ໜຽວມັດໂຈນຜູ້ນັ້ນໄຂວ້ຫຼັງໃຫ້ແໜ້ນ ແລ້ວເອົາມີດແຖແຖຫົວ ແຫ່ປະຈານໄປຕາມຖະໜົນ ຕາມທາງສີ່ແຍກລັ່ນຄ້ອງກອງ ນຳອອກໄປທາງປະຕູດ້ານທິດທັກຂິນ ແລ້ວຕັດຫົວທາງດ້ານທິດທັກຂິນຂອງໂຕເມືອງສັນນັ້ນ

ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນ ເພິ່ງສະເຫວີຍທຸກແລະໂທມະນັດຍ້ອນການກະທຳຄວາມຜິດນັ້ນແດ່ບໍ?

ເປັນແນວນັ້ນ ຂ້ານ້ອຍ

ສຸສີມະ ບຸຣຸດນັ້ນ ຕ້ອງສະເຫວີຍທຸກແລະໂທມະນັດ ຍ້ອນການກະທຳຄວາມຜິດນັ້ນນັບແຕ່ການບວດຂອງທ່ານຜູ້ລັກທຳໃນທຳວິໄນທີ່ຕະຖາຄົດກ່າວໄວ້ດີແລ້ວ ຢ່າງນີ້ ຍັງມີຜົນເປັນທຸກແລະເຜັດຮ້ອນກວ່າການສະເຫວີຍທຸກແລະໂທມະນັດນັ້ນ ທັງຍັງເປັນໄປເພື່ອວິນິບາດ (ປາສະຈາກຄວາມສຸກ) ແຕ່ຍ້ອນທ່ານເຫັນໂທດໂດຍຄວາມເປັນໂທດ ແລ້ວສະແດງຄືນຕາມວິທີທີ່ຖືກຕ້ອງ ເຮົາຮັບໂທດນັ້ນຂອງທ່ານ ຜູ້ໃດເຫັນໂທດໂດຍຄວາມເປັນໂທດແລ້ວສະແດງຄືນຕາມວິທີທີ່ຖືກຕ້ອງ ຜູ້ນັ້ນຈະໄດ້ສັງລວມຕໍ່ໄປ ຂໍ້ນີ້ ເປັນຄວາມຈະເລີນໃນວິໄນຂອງພຣະອະຣິຍະ

**ສຸສີມະປະຣິບພາຊະກະສູດທີ ໑໐ ຈົບ**

**ມະຫາວັກທີ່ ໗ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

1. ອັດສຸຕະວາສູດ
2. ປຸດຕະມັງສະສູດ
3. ນະຄະຣະສູດ
4. ນະລະກະລາປີສູດ
5. ອຸປະຍັນຕິສູດ
6. ທຸຕິຍະອັດສຸຕະວາສູດ
7. ອັດຖິຣາຄະສູດ
8. ສໍາມະສະສູດ
9. ໂກສໍາພີສູດ
10. ສຸສິມະປະຣິບພາຊະກະສູດ

# ໗. ສະມະນະພາມມະນະວັກ

## ໝວດວ່າດ້ວຍສະມະນະພາມ

## ໑. ຊະຣາມໍຣະນະສູດ

### ວ່າດ້ວຍຊະຣາແລະມໍລະນະ

[໗໑] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງຄວາມເກີດແຫ່ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງຄວາມດັບແຫ່ງຊະຣາແລະມໍລະນະ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ ສະມະນະຫຼືພາມເຫຼົ່ານັ້ນ ບໍ່ຈັດວ່າເປັນສະມະໜະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ແລະທ່ານເຫຼົ່ານັ້ນ ກໍບໍ່ເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ຫຼື ປະໂຫຍດຂອງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ຮູ້ແຈ້ງຊະຣາແລະມໍລະນະ ຯລຯ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ ສະມະນະຫຼືພາມເຫຼົ່ານັ້ນ ຈັດວ່າເປັນສະມະໜະໃນໝູ່ສະມະນະ ແລະຈັດວ່າເປັນພາມໃນໝູ່ພາມ ແລະທ່ານເຫຼົ່ານັ້ນກໍເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ແລະ ປະໂຫຍດຂອງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ (ສຸດຕັນຕະເປັນແນວດຽວ)

**ຊະຣາມໍຣະນະສູດທີ ໑ ຈົບ**

## ໘-໑໑. ຊາຕິສຸດຕາທິທະສະກະ

### ວ່າດ້ວຍພຣະສູດ ໑໐ ສູດມີຊາດສູດເປັນຕົ້ນ

[໗໘] (໘) ຂ້າພະເຈົ້າໄດ້ສະດັບມາແນວນີ້

ฯลฯ ບໍ່ຮູ້ແຈ້ງຊາດ ฯลฯ

(໒) ບໍ່ຮູ້ແຈ້ງພົບ ฯลฯ ສູດທີ ໒ ຈົບ

(໔) ບໍ່ຮູ້ແຈ້ງອຸປາທານ ฯลฯ ສູດທີ ໔ ຈົບ

(໕) ບໍ່ຮູ້ແຈ້ງຕັນຫາ ฯลฯ ສູດທີ ໕ ຈົບ

(໖) ບໍ່ຮູ້ແຈ້ງເວທະນາ ฯลฯ ສູດທີ ໖ ຈົບ

(໗) ບໍ່ຮູ້ແຈ້ງຜັດສະ ฯลฯ ສູດທີ ໗ ຈົບ

(໘) ບໍ່ຮູ້ແຈ້ງສະລາຍະຕະນະ ฯลฯ ສູດທີ ໘ ຈົບ

(໙) ບໍ່ຮູ້ແຈ້ງນາມຮູບ ฯลฯ ສູດທີ ໙ ຈົບ

(໑໐) ບໍ່ຮູ້ແຈ້ງວິນຍານ ฯลฯ ສູດທີ ໑໐ ຈົບ

(໑໑) ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງສັງຂານທັງຫຼາຍ ບໍ່ຮູ້ແຈ້ງຄວາມເກີດແຫ່ງສັງຂານ ບໍ່ຮູ້ແຈ້ງຄວາມດັບແຫ່ງສັງຂານ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງ ຂານ ฯลฯ ແລະ ທ່ານເຫຼົ່ານັ້ນກໍເຮັດໃຫ້ແຈ້ງ ฯลฯ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດ ຈຸບັນ

**ສູດທີ ໑໑ ຈົບ**

**ສະມະນະພາມມະນະວັກທີ ໘ ຈົບ**

## ລວມຄວາມທີ່ມີໃນວັກນີ້

ພຣະຜູ້ມີພຣະພາກເຈົ້າຕັດປັດຈະຍາການ ໑໑
ໂດຍຈຳແນກປັດຈະຍາການໜຶ່ງ ໆ ຕາມແບບອະຣິຍະສັດ ໔
ສະມະນະພາມມະນະວັກທີ ໘ ລວມຢູ່ໃນນິທານສັງຍຸດ

## ລວມວັກທີ່ມີໃນສັງຍຸດນີ້ ຄື

໑. ພຸດທະວັກ
໒. ອາຫາຣະວັກ
໓. ທະສະພົນວັກ
໔. ກະລາຣະຂັດຕິຍະວັກ
໕. ຄະຫະປະຕິວັກ
໖. ທຸກຂະວັກ
໗. ມະຫາວັກ
໘. ສະມະນະພາມມະນະວັກ

# ໙. ອັນຕະຣະເປີຍຍາລະ

## ໝວດວ່າດ້ວຍພຣະສູດທີ່ມີເນື້ອຄວາມລະໄວ້ໃນລະຫວ່າງ

## ໑. ສັດຖຸສູດ

### ວ່າດ້ວຍສາດສະດາ

[໓໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ບຸກຄົນເມື່ອບໍ່ຮູ້ເຫັນຊະຣາ ແລະ ມໍລະນະຕາມຄວາມເປັນຈິງ ເພິ່ງສະແຫວງຫາສາດສະດາ ເພື່ອຮູ້ຊະຣາແລະມໍລະນະຕາມຄວາມເປັນຈິງ ເມື່ອບໍ່ຮູ້ເຫັນຄວາມເກີດແຫ່ງຊະຣາແລະມໍລະນະຕາມຄວາມເປັນຈິງ ເພິ່ງສະແຫວງຫາສາດສະດາ ເພື່ອຮູ້ຄວາມເກີດແຫ່ງຊະຣາແລະມໍລະນະຕາມຄວາມເປັນຈິງ ເມື່ອບໍ່ຮູ້ເຫັນຄວາມດັບແຫ່ງຊະຣາແລະມໍລະນະຕາມຄວາມເປັນຈິງ ເພິ່ງສະແຫວງຫາສາດສະດາ ເພື່ອຮູ້ຄວາມດັບແຫ່ງຊະຣາແລະມໍລະນະຕາມຄວາມເປັນຈິງ ເມື່ອບໍ່ຮູ້ເຫັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະຕາມຄວາມເປັນຈິງ ເພິ່ງສະແຫວງຫາສາດສະດາ ເພື່ອຮູ້ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະຕາມຄວາມເປັນຈິງ (ສຸດຕັນຕະເປັນແນວດຽວກັນ)

**ສັດຖຸສູດທີ ໑ ຈົບ**

(ເນື້ອຄວາມທີ່ຫຍໍ້ໄວ້ຕໍ່ໄປນີ້ ກໍໃຫ້ຂະຫຍາຍຄວາມຄືຢູ່ເທິງທັງໝົດ)

## ໒-໑໑. ທຸຕິຍະສັດຖຸສຸດຕາທິທະສະກະ

### ວ່າດ້ວຍພຣະສູດ ໑໐ ສູດມີທຸຕິຍະສັດຖຸສູດເປັນຕົ້ນ

(໒) ພິກຂຸທັງຫຼາຍ ບຸກຄົນເມື່ອບໍ່ຮູ້ເຫັນ ຊາດ ຕາມຄວາມເປັນຈິງ ຯລຯ

**ສູດທີ ໒ ຈົບ**

(໓) ບຸກຄົນເມື່ອບໍ່ຮູ້ເຫັນ ພົບ ຕາມຄວາມເປັນຈິງ ຯລຯ

**ສູດທີ ໓ ຈົບ**

(໔) ບຸກຄົນເມື່ອບໍ່ຮູ້ເຫັນ ອຸປາທານ ຕາມຄວາມເປັນຈິງ ຯລຯ

**ສູດທີ ໔ ຈົບ**

(໕) ບຸກຄົນເມື່ອບໍ່ຮູ້ເຫັນ ຕັນຫາ ຕາມຄວາມເປັນຈິງ ຯລຯ

**ສູດທີ ໕ ຈົບ**

(໖) ບຸກຄົນເມື່ອບໍ່ຮູ້ເຫັນ ເວທະນາ ຕາມຄວາມເປັນຈິງ ຯລຯ

**ສູດທີ ໖ ຈົບ**

(໗) ບຸກຄົນເມື່ອບໍ່ຮູ້ເຫັນ ຜັດສະ ຕາມຄວາມເປັນຈິງ ຯລຯ

**ສູດທີ ໗ ຈົບ**

(໘) ບຸກຄົນເມື່ອບໍ່ຮູ້ເຫັນ ສະລາຍະຕະນະ ຕາມຄວາມເປັນຈິງ ຯລຯ

**ສູດທີ ໘ ຈົບ**

(໙) ບຸກຄົນເມື່ອບໍ່ຮູ້ເຫັນນາມ ຮູບ ຕາມຄວາມເປັນຈິງ ຯລຯ

**ສູດທີ ໙ ຈົບ**

(໑໐) ບຸກຄົນເມື່ອບໍ່ຮູ້ເຫັນ ວິນຍານ ຕາມຄວາມເປັນຈິງ ຯລຯ

**ສູດທີ ໑໐ ຈົບ**

(໑໑) ພິກຂຸທັງຫຼາຍ ບຸກຄົນເມື່ອບໍ່ຮູ້ເຫັນສັງຂານທັງຫຼາຍຕາມຄວາມເປັນຈິງ ເພິ່ງສະແຫວງຫາສາດສະດາ ເພື່ອຮູ້ສັງຂານທັງຫຼາຍຕາມຄວາມເປັນຈິງ ເມື່ອບໍ່ຮູ້ເຫັນຄວາມເກີດແຫ່ງສັງຂານຕາມຄວາມເປັນຈິງ ເພິ່ງສະແຫວງຫາສາດສະດາ ເພື່ອຮູ້ຄວາມເກີດແຫ່ງສັງຂານຕາມຄວາມເປັນຈິງ ເມື່ອບໍ່ຮູ້ເຫັນຄວາມດັບແຫ່ງສັງຂານຕາມຄວາມເປັນຈິງ ເພິ່ງສະແຫວງຫາສາດສະດາ ເພື່ອຮູ້ຄວາມດັບແຫ່ງສັງຂານຕາມຄວາມເປັນຈິງ ເມື່ອບໍ່ຮູ້ເຫັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານຕາມຄວາມເປັນຈິງ ເພິ່ງສະແຫວງຫາສາດສະດາ ເພື່ອຮູ້ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງ ສັງຂານຕາມຄວາມເປັນຈິງ

**ສູດທີ ໑໑ ຈົບ**

(ບັນດິດເພິ່ງທຳກິດໃນອະຣິຍະສັດທັງ ໔ ທຸກ ໆ ສູດໃຫ້ປາກົດ)

# ໔-໑໔. ສິກຂາສູດຕາທິເປີຍຍາລະເອການະສະກະ

## ວ່າດ້ວຍພຣະສູດ ໑໑ ສູດທີ່ຫຍໍ້ໄວ້ມີສິກຂາສູດເປັນຕົ້ນ

(໔) ພິກຂຸທັງຫຼາຍ ບຸກຄົນເມື່ອບໍ່ຮູ້ເຫັນຊະຣາແລະມໍລະນະຕາມຄວາມເປັນຈິງ ເພິ່ງທໍາການສຶກສາເພື່ອຮູ້ຊະຣາ ແລະ ມໍລະນະຕາມຄວາມເປັນຈິງ

**ສູດທີ ໔ ຈົບ**

(ເນື້ອຄວາມທີ່ຫຍໍ້ໄວ້ບັນດິດເພິ່ງທໍາກິດໃນອະຣິຍະສັດທັງ ໔ ທຸກ ໆ ສູດໃຫ້ປາກົດ)

(໓) ບຸກຄົນເມື່ອບໍ່ຮູ້ ຊະຣາແລະມໍລະນະ ຯລຯ ເພິ່ງທໍາຄວາມພຽນ ຯລຯ

**ສູດທີ ໓ ຈົບ**

(໔) ບຸກຄົນເມື່ອບໍ່ຮູ້ຊະຣາແລະມໍລະນະ ຯລຯ ເພິ່ງກະທໍາຄວາມພໍໃຈ ຯລຯ

**ສູດທີ ໔ ຈົບ**

(໕) ບຸກຄົນເມື່ອບໍ່ຮູ້ຊະຣາແລະມໍລະນະ ຯລຯ ເພິ່ງກະທໍາຄວາມອຸດສາຫະ ຯລຯ

**ສູດທີ ໕ ຈົບ**

(໖) ບຸກຄົນເມື່ອບໍ່ຮູ້ຊະຣາແລະມໍລະນະ ຯລຯ ເພິ່ງທໍາຄວາມຄວາມພຽນບໍ່ຖອຍກັບ ຯລຯ

**ສູດທີ ໖ ຈົບ**

(໗) ບຸກຄົນເມື່ອບໍ່ຮູ້ຊະຣາແລະມໍລະນະ ຯລຯ ເພິ່ງທໍາຄວາມພຽນເຄື່ອງເຜົາກິເລດ ຯລຯ

**ສູດທີ ໗ ຈົບ**

(໘) ບຸກຄົນເມື່ອບໍ່ຮູ້ຊະຣາແລະມໍລະນະ ຯລຯ ເພິ່ງທໍາຄວາມພຽນຢ່າງກ້າຫານ ຯລຯ

**ສູດທີ ໘ ຈົບ**

(໙) ບຸກຄົນເມື່ອບໍ່ຮູ້ຊະຣາແລະມໍລະນະ ຯລຯ ເພິ່ງທໍາຄວາມພຽນຕິດຕໍ່ ຯລຯ

**ສູດທີ ໙ ຈົບ**

(໑໐) ບຸກຄົນເມື່ອບໍ່ຮູ້ຊະຣາແລະມໍລະນະ ຯລຯ ເພິ່ງຕັ້ງສະຕິ ຯລຯ

**ສູດທີ ໑໐ ຈົບ**

(໑໑) ບຸກຄົນເມື່ອບໍ່ຮູ້ຊະຣາແລະມໍລະນະ ຯລຯ ເພິ່ງດຳລົງສຳປະຊັນຍະ ຯລຯ

**ສູດທີ ໑໑ ຈົບ**

(໑໒) ພິກຂຸທັງຫຼາຍ ບຸກຄົນເມື່ອບໍ່ຮູ້ຊະຣາແລະມໍລະນະ ຯລຯ ເພິ່ງທຳຄວາມບໍ່ຜະໝາດ ຯລຯ

**ສູດທີ ໑໒ ຈົບ**

**ອັນຕະຣະເປີຍຍາລະທີ ໗ ຈົບ**

## ລວມພຣະສູດທີ່ມີໃນເປີຍຍາລະນີ້ ຄື

| | |
|---|---|
| ໑. ສັດຖຸສູດ | ໒. ສິກຂາສູດ |
| ໓. ໂຍຄະສູດ | ໔. ສັນທະສູດ |
| ໕. ອຸດໂສທິສູດ | ໖. ອັບປະຕິວານິສູດ |
| ໗. ອາຕັບປະສູດ | ໘. ວິຣິຍະສູດ |
| ໙. ສາຕັດຈະສູດ | ໑໐. ສະຕິສູດ |
| ໑໑. ສຳປະຊັນຍະສູດ | ໑໒. ອັບປະມາທະສູດ |

**ພຣະສູດທີ່ມີອັນຕະຣະເປີຍຍາລະ ຈົບ**

ເບື້ອງຕົ້ນພຣະສູດມີ ໑໒ ສູດ ລວມທັງພຣະສູດທີ່ຫຍໍ້ໄວ້ໃນລະຫວ່າງ ເຂົ້າເປັນ ໑໓໒ ສູດ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວດ້ວຍ (ຈຳນວນຕາມແບບ) ອະຣິຍະສັດ ໔

**ລວມຄວາມໃນພຣະສູດທີ່ຫຍໍ້ໄວ້ໃນລະຫວ່າງ ຈົບ**

**ນິທານສັງຍຸດ ຈົບບໍລິບູນ**

# ໘. ອະພິສະມະຍະສັງຍຸດ

## ໑. ນະຂະສິຂາສູດ

### ວ່າດ້ວຍຝຸ່ນຕິດປາຍເລັບ

[໗໔] ຂ້າພະເຈົ້າໄດ້ສະດັບມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງໃຊ້ປາຍພຣະນະຂາ (ເລັບ) ຕັກຝຸ່ນຂຶ້ນມາເລັກໜ້ອຍ ແລ້ວຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄື ຝຸ່ນເລັກໜ້ອຍທີ່ເຮົາໃຊ້ປາຍເລັບຕັກຂຶ້ນມານີ້ກັບດິນຢູ່ໃນຜືນແຜ່ນດິນໃຫຍ່ນີ້ ແນວໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ຜືນແຜ່ນດິນໃຫຍ່ມີຫຼາຍກວ່າ ສ່ວນຝຸ່ນທີ່ພຣະອົງຊົງໃຊ້ປາຍເລັບຕັກຂຶ້ນມາມີພຽງເລັກໜ້ອຍ ເມື່ອທຽບກັບແຜ່ນດິນໃຫຍ່ແລ້ວ ຝຸ່ນທີ່ພຣະອົງໃຊ້ປາຍເລັບຕັກຂຶ້ນມາມີພຽງເລັກໜ້ອຍ ບໍ່ເຖິງເສດໜຶ່ງສ່ວນ ໑໐໐ ບໍ່ເຖິງເສດໜຶ່ງສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຄວາມທຸກທີ່ໝົດສິ້ນໄປຂອງບຸກຄົນຜູ້ເປັນອະຣິຍະສາວົກຜູ້ເຖິງພ້ອມດ້ວຍທິດຖິ ຜູ້ຮູ້ແຈ້ງນີ້ມີຫຼາຍກວ່າ ສ່ວນຄວາມທຸກທີ່ເຫຼືອມີປະລິມານໜ້ອຍ ເມື່ອທຽບກັບກອງທຸກທີ່ໝົດສິ້ນໄປເຊິ່ງມີມາກ່ອນ ຄວາມທຸກທີ່ໄດ້ຮັບຫຼວງຫຼາຍໃນ ໗ ອັດຕະພາບ ມີປະລິມານໜ້ອຍບໍ່ເຖິງເສດໜຶ່ງສ່ວນ ໑໐໐ ບໍ່ເຖິງເສດໜຶ່ງສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐

ການຕັດສະຣູ້ທຳມີປະໂຫຍດຍິ່ງໃຫຍ່ແບບນີ້ ການໄດ້ທຳຈັກຂຸມີປະໂຫຍດຍິ່ງໃຫຍ່ແບບນີ້

**ນະຂະສິຂາສູດທີ ໑ ຈົບ**

# ໘. ໂປກະຂະຣະນີສູດ

## ວ່າດ້ວຍສະໂບກຂະຣະນີ

[໗໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຽບຄື ສະໂບກຂະຣະນີຍາວ ໕໐ ໂຍດ ກວ້າງ ໕໐ ໂຍດ ເລິກ ໕໐ ໂຍດ ມີນ້ຳເຕັມພຽງຂອບ ກາກົ້ມດື່ມກິນໄດ້ ບຸຣຸດໃຊ້ປາຍຫຍ້າຄາກວັກນ້ຳຂຶ້ນຈາກສະໂບກຂະຣະນີນັ້ນ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄື ນ້ຳທີ່ບຸຣຸດໃຊ້ປາຍຫຍ້າຄາກວັກຂຶ້ນກໍດີ ນ້ຳໃນສະໂບກຂະຣະນີກໍດີ ແນວໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ນ້ຳໃນສະໂບກຂະຣະນີມີຫຼາຍກວ່າ ສ່ວນນ້ຳທີ່ບຸຣຸດໃຊ້ປາຍຫຍ້າຄາກວັກຂຶ້ນມີປະລິມານໜ້ອຍ ເມື່ອທຽບກັບນ້ຳໃນສະໂບກຂະຣະນີແລ້ວ ນ້ຳທີ່ບຸຣຸດໃຊ້ປາຍຫຍ້າຄາກວັກຂຶ້ນບໍ່ເຖິງເສດໜຶ່ງສ່ວນ ໑໐໐ ບໍ່ເຖິງເສດໜຶ່ງສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຄວາມທຸກທີ່ໝົດສິ້ນໄປຂອງບຸກຄົນຜູ້ເປັນອະຣິຍະສາວົກຜູ້ເຖິງພ້ອມດ້ວຍທິດຖິ ຜູ້ຮູ້ແຈ້ງນີ້ເອງມີຫຼາຍກວ່າ ສ່ວນຄວາມທຸກທີ່ເຫຼືອມີປະລິມານໜ້ອຍ ເມື່ອທຽບກັບກອງທຸກທີ່ໝົດໄປສິ້ນໄປເຊິ່ງມີມາກ່ອນ ຄວາມທຸກທີ່ໄດ້ຮັບຫຼວງຫຼາຍໃນ ໗ ອັດຕະພາບ ມີປະລິມານໜ້ອຍ ບໍ່ເຖິງເສດໜຶ່ງສ່ວນ ໑໐໐ ບໍ່ເຖິງເສດໜຶ່ງສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐

ການຕັດສະຣູ້ທຳມີປະໂຫຍດຍິ່ງໃຫຍ່ແນວນີ້ ການໄດ້ທຳຈັກຂຸມີປະໂຫຍດຍິ່ງໃຫຍ່ແນວນີ້

**ໂປກະຂະຣະນີສູດທີ ໘ ຈົບ**

# ໙. ສຳເພດຊະອຸທະກະສູດ

## ວ່າດ້ວຍແມ່ນ້ຳໄຫຼມາບັນຈົບກັນ

[໗໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຽບຄື ແມ່ນ້ຳໃຫຍ່ເຫຼົ່ານີ້ ຄື ຄົງຄາ ຍະມຸນາ ອະຈິຣະວະດີ ສະຣະພູມະຮີ ໄຫຼມາບັນຈົບກັນ ບຸຣຸດເພິ່ງກວັກນ້ຳ ໒ ຢາດຫຼື ໓ ຢາດຈາກແມ່ນ້ຳເຫຼົ່ານັ້ນ ທ່ານທັງຫຼາຍ

ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄື ນ້ຳທີ່ບຸຣຸດວັກຂຶ້ນ ໔ ຢາດ ຫຼື ໓ ຢາດກໍດີ ນ້ຳທີ່ໄຫຼມາບັນຈົບກັນກໍດີ ແນວໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ນ້ຳທີ່ໄຫຼມາບັນຈົບກັນນີ້ເອງມີຫຼາຍກວ່າ ສ່ວນນ້ຳທີ່ບຸຣຸດວັກຂຶ້ນ ໔ ຢາດຫຼື ໓ ຢາດມີປະລິມານໜ້ອຍ ເມື່ອທຽບກັບນ້ຳທີ່ໄຫຼມາບັນຈົບກັນ ນ້ຳ ໔ ຢາດຫຼື ໓ ຢາດທີ່ບຸຣຸດວັກຂຶ້ນມີປະລິມານໜ້ອຍ ບໍ່ເຖິງເສດໜຶ່ງສ່ວນ ໑໐໐ ບໍ່ເຖິງເສດໜຶ່ງສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຯລຯ ການໄດ້ທຳຈັກຂຸມີປະໂຫຍດຍິ່ງໃຫຍ່ແນວນີ້

**ສຳເພດຊະອຸທະກະສູດທີ ໓ ຈົບ**

# ໔. ທຸຕິຍະສຳເພດຊະອຸທະກະສູດ

## ວ່າດ້ວຍແມ່ນ້ຳທີ່ໄຫຼມາບັນຈົບກັນ ສູດທີ ໔

[໗໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຽບຄື ແມ່ນ້ຳໃຫຍ່ເຫຼົ່ານີ້ ຄື ຄົງຄາ ຍະມຸນາ ອະຈິຣະວະດີ ສະຣະພູ ມະຮີ ໄຫຼມາບັນຈົບກັນ ນ້ຳນັ້ນເພິ່ງເຫືອດແຫ້ງ ເຫຼືອຢູ່ ໔ ຢາດ ຫຼື ໓ ຢາດ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄືນ້ຳທີ່ໄຫຼມາບັນຈົບກັນທີ່ເຫືອດແຫ້ງໄປ ກໍດີ ຫຼື ນ້ຳ ໔ ຢາດຫຼື ໓ ຢາດທີ່ເຫຼືອຢູ່ກໍດີ ແນວໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ນ້ຳທີ່ໄຫຼມາບັນຈົບກັນເຊິ່ງເຫືອດແຫ້ງໄປຫຼາຍກວ່າ ສ່ວນນ້ຳ ໔ ຢາດຫຼື ໓ ຢາດທີ່ເຫຼືອຢູ່ມີປະລິມານໜ້ອຍ ເມື່ອທຽບກັບນ້ຳທີ່ໄຫຼມາບັນຈົບກັນທີ່ເຫືອດແຫ້ງໄປ ນ້ຳ ໔ ຢາດຫຼື ໓ ຢາດທີ່ເຫຼືອຢູ່ມີປະລິມານໜ້ອຍ ບໍ່ເຖິງເສດໜຶ່ງສ່ວນ ໑໐໐ ບໍ່ເຖິງເສດໜຶ່ງສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຯລຯ ການໄດ້ທຳຈັກຂຸມີປະໂຫຍດຍິ່ງໃຫຍ່ແນວນີ້

**ທຸຕິຍະສຳເພດຊະອຸທະກະສູດທີ ໔ ຈົບ**

# ໕. ປະຖະວີສູດ

## ວ່າດ້ວຍແຜ່ນດິນ

[໗໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຽບຄື ບຸຣຸດວາງກ້ອນດິນໜຽວທໍ່ເມັດໝາກກະເບົາ ໗ ກ້ອນ ໄວ້ເທິງແຜ່ນດິນໃຫຍ່ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄື ກ້ອນດິນໜຽວທໍ່ເມັດໝາກກະເບົາ ໗ ກ້ອນທີ່ບຸຣຸດວາງໄວ້ກໍດີ ແຜ່ນດິນໃຫຍ່ກໍດີ ແນວໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ແຜ່ນດິນໃຫຍ່ມີຫຼາຍກວ່າ ສ່ວນກ້ອນດິນໜຽວທໍ່ເມັດໝາກກະເບົາ ໗ ກ້ອນ ທີ່ບຸຣຸດວາງໄວ້ມີຈຳນວນໜ້ອຍ ເມື່ອທຽບກັບແຜ່ນດິນໃຫຍ່ ກ້ອນດິນໜຽວທີ່ບຸຣຸດວາງໄວ້ມີຈຳນວນໜ້ອຍ ບໍ່ເຖິງເສດໜຶ່ງສ່ວນ ໑໐໐ ບໍ່ເຖິງເສດໜຶ່ງສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຯລຯ ການໄດ້ທຳຈັກຂຸມີປະໂຫຍດຍິ່ງໃຫຍ່ແນວນີ້

**ປະຖະວີສູດທີ ໕ ຈົບ**

# ໖. ທຸຕິຍະປະຖະວີສູດ

## ວ່າດ້ວຍແຜ່ນດິນ ສູດທີ ໒

[໗໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຽບຄື ແຜ່ນດິນໃຫຍ່ເພິ່ງໝົດສິ້ນໄປ ເຫຼືອກ້ອນດິນໜຽວທໍ່ເມັດໝາກກະເບົາ ໗ ກ້ອນ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄື ແຜ່ນດິນໃຫຍ່ທີ່ໝົດສິ້ນໄປກໍດີ ກ້ອນດິນໜຽວທໍ່ເມັດໝາກກະເບົາ ໗ ກ້ອນທີ່ເຫຼືອຢູ່ກໍດີ ແນວໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ແຜ່ນດິນໃຫຍ່ທີ່ໝົດສິ້ນໄປມີຫຼາຍກວ່າ ສ່ວນກ້ອນດິນໜຽວທໍ່ເມັດໝາກກະເບົາ ໗ ກ້ອນທີ່ເຫຼືອຢູ່ມີຈຳນວນໜ້ອຍ ເມື່ອທຽບກັບແຜ່ນດິນໃຫຍ່ທີ່ໝົດສິ້ນໄປ

ກ້ອນດິນໜຽວທີ່ເມັດໝາກກະເບົາ ໗ ກ້ອນທີ່ເຫຼືອຢູ່ມີຈຳນວນໜ້ອຍ ບໍ່ເຖິງເສດໜຶ່ງສ່ວນ ໑໐໐ ບໍ່ເຖິງເສດໜຶ່ງສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຯລຯ ການໄດ້ທຳຈັກຂຸມີປະໂຫຍດຍິ່ງໃຫຍ່ແນວນີ້

**ທຸຕິຍະປະຖະວີສູດທີ ໖ ຈົບ**

## ໗. ສະມຸດທະສູດ

### ວ່າດ້ວຍສະມຸດ

[໘໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຽບຄື ບຸຣຸດເພິ່ງກວັກນ້ຳ ໒ ຢາດຫຼື ໓ ຢາດຂຶ້ນຈາກ ມະຫາສະມຸດ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄື ນ້ຳທີ່ບຸຣຸດວັກຂຶ້ນ ໒ ຢາດ ຫຼື ໓ ຢາດກໍດີ ນ້ຳໃນມະຫາສະມຸດກໍດີ ແນວໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ນ້ຳໃນມະຫາສະມຸດມີຫຼາຍກວ່າ ສ່ວນນ້ຳທີ່ບຸຣຸດວັກຂຶ້ນ ໒ ຢາດຫຼື ໓ ຢາດມີປະລິມານໜ້ອຍ ເມື່ອທຽບກັບນ້ຳໃນມະຫາສະມຸດ ນ້ຳທີ່ບຸຣຸດວັກຂຶ້ນ ໒ ຢາດຫຼື ໓ ຢາດ ບໍ່ເຖິງເສດໜຶ່ງສ່ວນ ໑໐໐ ບໍ່ເຖິງເສດໜຶ່ງສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຯລຯ ການໄດ້ທຳຈັກຂຸມີປະໂຫຍດຍິ່ງໃຫຍ່ແນວນີ້

**ສະມຸດທະສູດທີ ໗ ຈົບ**

## ໘. ທຸຕິຍະສະມຸດທະສູດ

### ວ່າດ້ວຍສະມຸດ ສູດທີ ໒

[໘໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຽບຄື ນ້ຳໃນມະຫາສະມຸດເພິ່ງເຫືອດແຫ້ງໄປ ເຫຼືອນ້ຳຢູ່ ໒ ຢາດຫຼື ໓ ຢາດ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄື ນ້ຳໃນມະຫາສະມຸດທີ່ເຫືອດແຫ້ງໄປກໍດີ ນ້ຳ ໒ ຢາດຫຼື ໓ ຢາດທີ່ເຫຼືອຢູ່ກໍດີ ແນວໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ນ້ຳໃນມະຫາສະມຸດທີ່ເຫືອດແຫ້ງໄປມີຫຼາຍກວ່າ ສ່ວນນ້ຳ ໒ ຢາດຫຼື ໓ ຢາດທີ່ເຫຼືອຢູ່ມີປະລິມານໜ້ອຍ ເມື່ອທຽບກັບນ້ຳໃນມະຫາສະມຸດ ທີ່ເຫືອດແຫ້ງໄປ ນ້ຳ ໒ ຢາດຫຼື ໓ ຢາດທີ່ເຫຼືອຢູ່ມີປະລິມານນ້ອຍ ບໍ່ເຖິງເສດໜຶ່ງ ສ່ວນ ໑໐໐ ບໍ່ເຖິງເສດໜຶ່ງສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຯລຯ ການໄດ້ທຳຈັກຂຸມີປະໂຫຍດຍິ່ງໃຫຍ່ແນວນີ້

**ທຸຕິຍະສະມຸດທະສູດທີ ໗ ຈົບ**

# ໘. ປັບພະຕະສູດ

## ວ່າດ້ວຍພູ

[໗໒] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຽບຄື ບຸຣຸດເພິ່ງວາງກ້ອນຫີນທໍ່ໄນຜັກກາດ ໗ ກ້ອນ ໄວ້ເທິງພູຫຼວງຫິມະພານ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄື ກ້ອນຫີນທໍ່ໄນຜັກກາດ ໗ ກ້ອນທີ່ບຸຣຸດວາງໄວ້ກໍດີ ພູຫຼວງຫິມະພານກໍດີ ແນວໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ພູຫຼວງຫິມະພານມີຫຼາຍກວ່າ ສ່ວນກ້ອນຫີນທໍ່ໄນຜັກກາດ ໗ ກ້ອນທີ່ບຸຣຸດວາງໄວ້ມີຈຳນວນໜ້ອຍ ເມື່ອທຽບກັບພູຫຼວງຫິມະພານ ກ້ອນຫີນທໍ່ໄນຜັກກາດ ໗ ກ້ອນທີ່ບຸຣຸດວາງໄວ້ມີຈຳນວນໜ້ອຍ ບໍ່ເຖິງເສດໜຶ່ງ ສ່ວນ ໑໐໐ ບໍ່ເຖິງເສດໜຶ່ງສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຯລຯ ການໄດ້ທຳຈັກຂຸມີປະໂຫຍດຍິ່ງໃຫຍ່ແນວນີ້

**ປັບພະຕະສູດທີ ໘ ຈົບ**

# ໑໐. ທຸຕິຍະປັບພະຕະສູດ

## ວ່າດ້ວຍພູ ສູດທີ ໘

[໗໓] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຽບຄື ພູຫຼວງຫິມະພານທີ່ທະລາຍກະຈັດກະຈາຍໄປ ເຫຼືອກ້ອນຫີນທີ່ໄນຜັກກາດຢູ່ ໆ ກ້ອນ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄື ພູຫຼວງຫິມະພານທີ່ທະລາຍກະຈັດກະຈາຍໄປກໍດີ ກ້ອນຫີນທີ່ເມັດພັນຜັກກາດ ໆ ກ້ອນທີ່ເຫຼືອຢູ່ກໍດີ ແນວໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ພູຫຼວງຫິມະພານທີ່ທະລາຍກະຈັດກະຈາຍໄປມີຫຼາຍກວ່າ ສ່ວນກ້ອນຫີນທີ່ໄນຜັກກາດ ໆ ກ້ອນທີ່ເຫຼືອຢູ່ມີຈຳນວນໜ້ອຍ ເມື່ອທຽບກັນກັບພູຫຼວງຫິມະພານທີ່ທະລາຍກະຈັດກະຈາຍໄປ ກ້ອນຫີນທີ່ເມັດພັນ ຜັກກາດ ໆ ກ້ອນທີ່ເຫຼືອຢູ່ມີຈຳນວນໜ້ອຍ ບໍ່ເຖິງເສດໜຶ່ງສ່ວນ ໑໐໐ ບໍ່ເຖິງເສດໜຶ່ງ ສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ຄວາມທຸກທີ່ໝົດສິ້ນໄປຂອງບຸກຄົນຜູ້ເປັນອະຣິຍະສາວົກຜູ້ເຖິງພ້ອມດ້ວຍທິດຖິ ຜູ້ຮູ້ແຈ້ງມີຫຼາຍກວ່າ ສ່ວນຄວາມທຸກທີ່ເຫຼືອມີປະລິມານໜ້ອຍ ເມື່ອທຽບກັບກອງທຸກທີ່ໝົດສິ້ນໄປເຊິ່ງມີໃນກ່ອນ ຄວາມທຸກທີ່ໄດ້ຮັບຫຼວງຫຼາຍໃນ ໆ ອັດຕະພາບມີປະລິມານໜ້ອຍ ບໍ່ເຖິງເສດໜຶ່ງສ່ວນ ໑໐໐ ບໍ່ເຖິງ ເສດໜຶ່ງສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐

ການຕັດສະຮູ້ທຳມີປະໂຫຍດຍິ່ງໃຫຍ່ແນວນີ້ ການໄດ້ທຳຈັກຂຸມີປະໂຫຍດຍິ່ງໃຫຍ່ແນວນີ້

**ທຸຕິຍະປັບພະຕະສູດທີ ໑໐ ຈົບ**

# ໑໑. ຕະຕິຍະປັບພະຕະສູດ

## ວ່າດ້ວຍພູ ສູດທີ ໓

[໗໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ປຽບຄື ບຸຣຸດວາງກ້ອນຫີນທໍ່ເມັດຖົ່ວຂຽວ ໆ ກ້ອນ ໄວ້ເທິງຂຸນເຂົາສິເນຣຸ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄື ກ້ອນຫີນທໍ່ເມັດຖົ່ວຂຽວ ໆ ກ້ອນທີ່ບຸຣຸດວາງໄວ້ກໍດີ ຂຸນເຂົາສິເນຣຸກໍດີ ແນວໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ຂຸນເຂົາສິເນຣຸມີຫຼາຍກວ່າ ສ່ວນກ້ອນຫີນທໍ່ເມັດຖົ່ວຂຽວ ໆ ກ້ອນທີ່ບຸຣຸດວາງໄວ້ມີຈຳນວນໜ້ອຍ ເມື່ອທຽບກັບຂຸນເຂົາສິເນຣຸ ກ້ອນຫີນທໍ່ເມັດຖົ່ວຂຽວ ໆ ກ້ອນທີ່ບຸຣຸດວາງໄວ້ ບໍ່ເຖິງເສດໜຶ່ງສ່ວນ ໑໐໐ ບໍ່ເຖິງເສດໜຶ່ງ ສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ເມື່ອທຽບກັບການບັນລຸທຳຂອງບຸກຄົນຜູ້ເປັນອະຣິຍະສາວົກ ຜູ້ເຖິງພ້ອມດ້ວຍທິດຖິ ການບັນລຸຄຸນວິເສດຂອງອັນຍະເດຍຣະຖີສະມະນະພາມ ແລະ ປະຣິພາຊົກທັງຫຼາຍ ມີປະລິມານໜ້ອຍ ບໍ່ເຖິງເສດໜຶ່ງສ່ວນ ໑໐໐ ບໍ່ເຖິງເສດໜຶ່ງ ສ່ວນ ໑,໐໐໐ ບໍ່ເຖິງເສດໜຶ່ງສ່ວນ ໑໐໐,໐໐໐

ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ມີການບັນລຸຍິ່ງໃຫຍ່ແນວນີ້ ມີອະພິນຍາຍິ່ງໃຫຍ່ແນວນີ້

**ຕະຕິຍະປັບພະຕະສູດທີ ໑໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



**ອະພິສະມະຍະສັງຍຸດ ຈົບບໍລິບູນ**

# ໓. ທາດສັງຍຸດ

## ໑. ນານັດຕະວັກ

### ໝວດວ່າດ້ວຍຄວາມຕ່າງ

## ໑. ທາດນານັດຕະສູດ

### ວ່າດ້ວຍຄວາມຕ່າງແຫ່ງທາດ

[໙໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມຕ່າງແຫ່ງທາດແກ່ທ່ານທັງຫຼາຍ ທ່ານທັງຫຼາຍ ຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກຈຶ່ງໄດ້ຕັດເລື້ອງນີ້ ວ່າ

ຄວາມຕ່າງແຫ່ງທາດ ເປັນແນວໃດ?

ຄື ຈັກຂຸທາດ (ທາດຄືຈັກຂຸປະສາທະ) ຮູບທາດ (ທາດຄືຮູປາຣົມ) ຈັກຂຸວິນຍານທາດ (ທາດຄືຈັກຂຸວິນຍານ)

ໂສຕະທາດ (ທາດຄືໂສຕະປະສາທ) ສັດທະທາດ (ທາດຄືສັດທາຣົມ) ໂສຕະວິນຍານທາດ (ທາດຄືໂສຕະວິນຍານ)

ຄານະທາດ (ທາດຄືຄານະປະສາທະ) ຄັນທະທາດ (ທາດຄືຄັນທາຣົມ) ຄານະວິນຍານທາດ (ທາດຄືຄານະວິນຍານ)

ຊິວຫາທາດ (ທາດຄືຊິວຫາປະສາທະ) ຣະສະທາດ (ທາດຄືຣະສາຣົມ) ຊິວຫາວິນຍານທາດ (ທາດຄືຊິວຫາວິນຍານ)

ກາຍະທາດ (ທາດຄືກາຍປະສາທະ) ໂຜດຖັບພະທາດ (ທາດຄືໂຜດຖັບພາຣົມ) ກາຍວິນຍານທາດ (ທາດຄືກາຍວິນຍານ)

ມະໂນທາດ (ທາດຄືມະໂນ) ທຳມະທາດ (ທາດຄືທຳມາຣົມ) ມະໂນວິນຍານທາດ (ທາດຄືມະໂນວິນຍານ)

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ຄວາມຕ່າງແຫ່ງທາດ

**ທາດນານັດຕະສູດທີ ໑ ຈົບ**

# ໘. ຜັດສະນານັດຕະສູດ

## ວ່າດ້ວຍຄວາມຕ່າງແຫ່ງຜັດສະ

[໘໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ฯລฯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ฯລฯ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງຜັດສະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ

ຄວາມຕ່າງແຫ່ງທາດ ເປັນແນວໃດ?

ຄື ຈັກຂຸທາດ ໂສຕະທາດ ຄານະທາດ ຊິວຫາທາດ ກາຍະທາດ ມະໂນທາດ

ນີ້ເຮົາຮຽກວ່າ ຄວາມຕ່າງແຫ່ງທາດ

ຄວາມຕ່າງແຫ່ງຜັດສະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ເປັນແນວໃດ? ຄື

ຈັກຂຸສຳຜັດເກີດຂຶ້ນ ຍ້ອນອາໄສຈັກຂຸທາດ ฯລฯ
ฯລฯ ຍ້ອນອາໄສໂສຕະທາດ
ฯລฯ ຍ້ອນອາໄສຄານະທາດ
ฯລฯ ຍ້ອນອາໄສຊິວຫາທາດ
ฯລฯ ຍ້ອນອາໄສກາຍະທາດ
ມະໂນສຳຜັດເກີດຂຶ້ນ ຍ້ອນອາໄສມະໂນທາດ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງຜັດສະເກີດຂຶ້ນ ຍ້ອນອາໄສຄວາມຕ່າງແຫ່ງທາດເປັນແນວນີ້

**ຜັດສະນານັດຕະສູດທີ ໘ ຈົບ**

# ໓. ໂນຜັດສະນານັດຕະສູດ

## ວ່າດ້ວຍທາດທີ່ບໍ່ອາໄສຄວາມຕ່າງແຫ່ງຜັດສະ

[໘໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງຜັດສະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງທາດບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງຜັດສະ

ຄວາມຕ່າງແຫ່ງທາດ ເປັນແນວໃດ?

ຄື ຈັກຂຸທາດ ຯລຯ ມະໂນທາດ

ນີ້ເຮົາຮຽກວ່າ ຄວາມຕ່າງແຫ່ງທາດ

ຄວາມຕ່າງແຫ່ງຜັດສະເກີດຂຶ້ນ ຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງທາດບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງຜັດສະ ເປັນແນວໃດ?

ຄື ຈັກຂຸສຳຜັດເກີດຂຶ້ນຍ້ອນອາໄສຈັກຂຸທາດ ຈັກຂຸທາດບໍ່ເກີດຂຶ້ນຍ້ອນອາໄສຈັກຂຸສຳຜັດ ຯລຯ ມະໂນສຳຜັດເກີດຂຶ້ນຍ້ອນອາໄສມະໂນທາດ ມະໂນທາດບໍ່ເກີດຂຶ້ນຍ້ອນ ອາໄສມະໂນສຳຜັດ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງຜັດສະເກີດຂຶ້ນ ຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງທາດບໍ່ເກີດຂຶ້ນ ຍ້ອນອາໄສຄວາມຕ່າງແຫ່ງຜັດສະ ເປັນແນວນີ້

**ໂນຜັດສະນານັດຕະສູດທີ ໓ ຈົບ**

# ໔. ເວທະນານານັດຕະສູດ

## ວ່າດ້ວຍຄວາມຕ່າງແຫ່ງເວທະນາ

[໘໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງຜັດສະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງເວທະນາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງຜັດສະ

ຄວາມຕ່າງແຫ່ງທາດ ເປັນແນວໃດ?

ຄື ຈັກຂຸທາດ ຯລຯ ມະໂນທາດ

ນີ້ເຮົາຮຽກວ່າ ຄວາມຕ່າງແຫ່ງທາດ

ຄວາມຕ່າງແຫ່ງຜັດສະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງເວທະນາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງຜັດສະ ເປັນແນວໃດ?

ຄື ຈັກຂຸສຳຜັດເກີດຂຶ້ນຍ້ອນອາໄສຈັກຂຸທາດ ຈັກຂຸສຳຜັດສະຊາເວທະນາເກີດຂຶ້ນຍ້ອນອາໄສຈັກຂຸສຳຜັດ ຯລຯ

ມະໂນສຳຜັດເກີດຂຶ້ນຍ້ອນອາໄສມະໂນທາດ ມະໂນສຳຜັດສະຊາເວທະນາເກີດຂຶ້ນຍ້ອນອາໄສ ມະໂນສຳຜັດ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງຜັດສະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງເວທະນາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງຜັດສະ ເປັນແນວນີ້

**ເວທະນານານັດຕະສູດທີ ໔ ຈົບ**

# ໕. ທຸຕິຍະເວທະນານານັດຕະສູດ

## ວ່າດ້ວຍຄວາມຕ່າງແຫ່ງເວທະນາ ສູດທີ ໔

[໘໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງຜັດສະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງເວທະນາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງຜັດສະ ຄວາມຕ່າງແຫ່ງຜັດສະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງເວທະນາ ຄວາມຕ່າງແຫ່ງທາດບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງຜັດສະ

ຄວາມຕ່າງແຫ່ງທາດ ເປັນແນວໃດ?

ຄື ຈັກຂຸທາດ ຯລຯ ມະໂນທາດ

ນີ້ເຮົາຮຽກວ່າ ຄວາມຕ່າງແຫ່ງທາດ

ຄວາມຕ່າງແຫ່ງຜັດສະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງເວທະນາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງຜັດສະ ຄວາມຕ່າງແຫ່ງຜັດສະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງເວທະນາ ຄວາມຕ່າງແຫ່ງທາດບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງຜັດສະ ເປັນແນວໃດ?

ຄື ຈັກຂຸສໍາຜັດເກີດຂຶ້ນຍ້ອນອາໄສຈັກຂຸທາດ ຈັກຂຸສໍາຜັດສະຊາເວທະນາເກີດຂຶ້ນຍ້ອນອາໄສຈັກຂຸສໍາຜັດ ຈັກຂຸສໍາຜັດບໍ່ເກີດຂຶ້ນຍ້ອນອາໄສຈັກຂຸສໍາຜັດສະຊາເວທະນາ ຈັກຂຸທາດບໍ່ເກີດຂຶ້ນຍ້ອນອາໄສຈັກຂຸສໍາຜັດ ຯລຯ

ມະໂນສໍາຜັດເກີດຂຶ້ນຍ້ອນອາໄສມະໂນທາດ ມະໂນສໍາຜັດສະຊາເວທະນາເກີດຂຶ້ນຍ້ອນອາໄສມະໂນສໍາຜັດ ມະໂນສໍາຜັດບໍ່ເກີດຂຶ້ນຍ້ອນອາໄສມະໂນສໍາຜັດສະຊາເວທະນາ ມະໂນທາດບໍ່ເກີດຂຶ້ນຍ້ອນອາໄສມະໂນສໍາຜັດ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງຜັດສະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງເວທະນາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງຜັດສະ ຄວາມຕ່າງແຫ່ງຜັດສະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງເວທະນາ ຄວາມຕ່າງແຫ່ງທາດບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງຜັດສະ ເປັນແນວນີ້

**ທຸຕິຍະເວທະນານານັດຕະສູດທີ ໕ ຈົບ**

# ໖. ພາຫິຣະທາດນານັດຕະສູດ

## ວ່າດ້ວຍຄວາມຕ່າງແຫ່ງທາດພາຍນອກ

[໙໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມຕ່າງແຫ່ງທາດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ຄວາມຕ່າງແຫ່ງທາດ ເປັນແນວໃດ?

ຄື ຮູບທາດ ສັດທະທາດ ຄັນທະທາດ ຣະສະທາດ ໂຜດຖັບພະທາດ ທໍາມະທາດ

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ຄວາມຕ່າງແຫ່ງທາດ

**ພາຫິຣະທາດນານັດຕະສູດທີ ໖ ຈົບ**

## ໗. ສັນຍານານັດຕະສູດ

### ວ່າດ້ວຍຄວາມຕ່າງແຫ່ງສັນຍາ

[໙໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງສັນຍາ (ຄວາມຈື່ໄດ້) ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງສັງກັບປະ (ຄວາມດໍາຣິ) ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ຄວາມຕ່າງແຫ່ງສັນທະ (ຄວາມພໍໃຈ) ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັງກັບປະ ຄວາມຕ່າງແຫ່ງປະຣິລາຫະ (ຄວາມຮ້ອນຮົນ) ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນທະ ຄວາມຕ່າງແຫ່ງປະຣິເຍສະນາ (ການສະແຫວງຫາ) ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິລາຫະ

ຄວາມຕ່າງແຫ່ງທາດ ເປັນແນວໃດ?

ຄື ຮູບທາດ ຯລຯ ທໍາມະທາດ

ນີ້ເຮົາຮຽກວ່າ ຄວາມຕ່າງແຫ່ງທາດ

ຄວາມຕ່າງແຫ່ງສັນຍາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງ ສັງກັບປະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ຄວາມຕ່າງແຫ່ງສັນທະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັງກັບປະ ຄວາມຕ່າງແຫ່ງປະຣິລາຫະເກີດຂຶ້ນ ຍ້ອນອາໄສຄວາມຕ່າງແຫ່ງສັນທະ ຄວາມຕ່າງແຫ່ງປະຣິເຍສະນາ ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິລາຫະເປັນແນວໃດ?

ຮູບສັນຍາເກີດຂຶ້ນຍ້ອນອາໄສຮູບທາດ ຮູບສັງກັບປະເກີດຂຶ້ນຍ້ອນອາໄສຮູບສັນຍາ ຮູບສັນທະເກີດຂຶ້ນຍ້ອນອາໄສຮູບສັງກັບປະ ຮູບປະຣິລາຫະເກີດຂຶ້ນຍ້ອນອາໄສຮູບສັນທະ ຮູບປະຣິເຍສະນາເກີດຂຶ້ນຍ້ອນອາໄສຮູບປະຣິລາຫະ ຯລຯ

ທຳມະສັນຍາເກີດຂຶ້ນຍ້ອນອາໄສທຳມະທາດ ທຳມະສັງກັບປະເກີດຂຶ້ນຍ້ອນອາໄສ ທຳມະສັນຍາ ທຳມະສັນທະເກີດຂຶ້ນຍ້ອນອາໄສທຳມະສັງກັບປະ ທຳມະປະຣິລາຫະເກີດຂຶ້ນຍ້ອນອາໄສທຳມະສັນທະ ທຳມະປະຣິເຍສະນາເກີດຂຶ້ນຍ້ອນອາໄສທຳມະປະຣິລາຫະ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງສັນຍາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງສັງກັບປະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ຄວາມຕ່າງແຫ່ງສັນທະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັງກັບປະ ຄວາມຕ່າງແຫ່ງປະຣິລາຫະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນທະ ຄວາມຕ່າງແຫ່ງປະຣິເຍສະນາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິລາຫະ ເປັນແນວນີ້

**ສັນຍານານັດຕະສູດທີ ໗ ຈົບ**

# ໘. ໂນປະຣິເຍສະນານານັດຕະສູດ

## ວ່າດ້ວຍທາດທີ່ບໍ່ອາໄສຄວາມຕ່າງແຫ່ງປະຣິເຍສະນາ

[໙໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງສັນຍາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດຄວາມຕ່າງແຫ່ງສັງກັບປະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ຯລຯ

ຄວາມຕ່າງແຫ່ງປະຣິເຍສະນາ ຯລຯ

ຄວາມຕ່າງແຫ່ງປະຣິລາຫະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິເຍສະນາ ຄວາມຕ່າງ ແຫ່ງສັນທະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິລາຫະ ຄວາມຕ່າງແຫ່ງສັງກັບປະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນທະ ຄວາມຕ່າງແຫ່ງສັນຍາບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັງກັບປະ ຄວາມຕ່າງແຫ່ງທາດບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ

ຄວາມຕ່າງແຫ່ງທາດ ເປັນແນວໃດ?

ຄື ຮູບທາດ ຯລຯ ທຳມະທາດ

ນີ້ເຮົາຮຽກວ່າ ຄວາມຕ່າງແຫ່ງທາດ

ຄວາມຕ່າງແຫ່ງສັນຍາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງສັງກັບປະ ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ຯລຯ

ຄວາມຕ່າງແຫ່ງປະຣິເຍສະນາ ຯລຯ

ຄວາມຕ່າງແຫ່ງປະຣິລາຫະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິເຍສະນາ ຄວາມຕ່າງແຫ່ງສັນທະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິລາຫະ ຄວາມຕ່າງແຫ່ງສັງກັບປະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນທະ ຄວາມຕ່າງແຫ່ງສັນຍາບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັງກັບປະ ຄວາມຕ່າງແຫ່ງທາດບໍ່ເກີດຂຶ້ນຍ້ອນ ອາໄສຄວາມຕ່າງແຫ່ງສັນຍາ ເປັນແນວໃດ?

ຄື ຮູບສັນຍາເກີດຂຶ້ນຍ້ອນອາໄສຮູບທາດ ຯລຯ

ທຳມະສັນຍາເກີດຂຶ້ນຍ້ອນອາໄສທຳມະທາດ ທຳມະສັງກັບປະເກີດຂຶ້ນຍ້ອນອາໄສທຳມະສັນຍາ ຯລຯ

ທຳມະປະຣິເຍສະນາ ຯລຯ

ທຳມະປະຣິລາຫະບໍ່ເກີດຂຶ້ນຍ້ອນອາໄສທຳມະປະຣິເຍສະນາ ທຳມະສັນທະບໍ່ເກີດຂຶ້ນຍ້ອນອາໄສທຳມະປະຣິລາຫະ ທຳມະສັງກັບປະບໍ່ເກີດຂຶ້ນຍ້ອນອາໄສທຳມະສັນທະ ທຳມະສັນຍາບໍ່ເກີດຂຶ້ນຍ້ອນອາໄສທຳມະສັງກັບປະ ທຳມະທາດບໍ່ເກີດຂຶ້ນຍ້ອນອາໄສທຳມະສັນຍາ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງສັນຍາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງສັງກັບປະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ຯລຯ

ຄວາມຕ່າງແຫ່ງປະຣິເຍສະນາ ຯລຯ

ຄວາມຕ່າງແຫ່ງປະຣິລາຫະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິເຍສະນາ ຯລຯ

ຄວາມຕ່າງແຫ່ງສັນຍາ ຯລຯ

ຄວາມຕ່າງແຫ່ງທາດບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ເປັນແນວນີ້

**ໂນປະຣິເຍສະນານານັດຕະສູດທີ ໗ ຈົບ**

# ໙. ພາຫິຣະຜັດສະນານັດຕະສູດ

## ວ່າດ້ວຍຄວາມຕ່າງແຫ່ງຜັດສະຍ້ອນອາໄສທາດພາຍນອກ

[໙໓] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ฯລฯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ฯລฯ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງສັນຍາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງສັງກັປປະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ຄວາມຕ່າງແຫ່ງຜັດສະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັງກັປປະ ຄວາມຕ່າງແຫ່ງເວທະນາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງຜັດສະ ຄວາມຕ່າງແຫ່ງສັນທະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງເວທະນາ ຄວາມຕ່າງແຫ່ງປະຣິລາຫະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນທະ ຄວາມຕ່າງແຫ່ງປະຣິເຍສະນາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິລາຫະ ຄວາມຕ່າງແຫ່ງລາພະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິເຍສະນາ

ຄວາມຕ່າງແຫ່ງທາດ ເປັນແນວໃດ?

ຄື ຣູບທາດ ฯລฯ ທຳມະທາດ

ນີ້ເຮົາຮຽກວ່າ ຄວາມຕ່າງແຫ່ງທາດ

ຄວາມຕ່າງແຫ່ງສັນຍາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ฯລฯ ຄວາມຕ່າງແຫ່ງລາພະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິເຍສະນາ ເປັນແນວໃດ?

ຄື ຣູບສັນຍາເກີດຂຶ້ນຍ້ອນອາໄສຣູບທາດ ຣູບສັງກັປປະເກີດຂຶ້ນຍ້ອນອາໄສຣູບສັນຍາ ຣູບສຳຜັດເກີດຂຶ້ນຍ້ອນອາໄສຣູບສັງກັປປະ ຣູບສຳຜັດສະຊາເວທະນາເກີດຂຶ້ນຍ້ອນອາໄສຣູບສຳຜັດ ຣູບສັນທະເກີດຂຶ້ນຍ້ອນອາໄສຣູບສຳຜັດສະຊາເວທະນາ ຣູບປະຣິລາຫະເກີດຂຶ້ນຍ້ອນອາໄສຣູບສັນທະ ຣູບປະຣິເຍສະນາເກີດຂຶ້ນຍ້ອນອາໄສຣູບປະຣິລາຫະ ຣູບລາພະເກີດຂຶ້ນຍ້ອນອາໄສຣູບປະຣິເຍສະນາ ฯລฯ ທຳມະສັນຍາເກີດຂຶ້ນຍ້ອນອາໄສທຳມະທາດ ທຳມະສັງກັປປະເກີດຂຶ້ນຍ້ອນອາໄສທຳມະສັນຍາ ທຳມະສຳຜັດເກີດຂຶ້ນຍ້ອນອາໄສທຳມະສັງກັປປະ ທຳມະສຳຜັດສະ ຊາເວທະນາເກີດຂຶ້ນຍ້ອນອາໄສທຳມະສຳຜັດ ທຳມະສັນທະເກີດຂຶ້ນຍ້ອນອາໄສທຳມະສຳຜັດສະຊາເວທະນາ ທຳມະປະຣິລາຫະເກີດຂຶ້ນຍ້ອນອາໄສທຳມະສັນທະ ທຳມະປະຣິເຍສະນາເກີດຂຶ້ນຍ້ອນອາໄສທຳມະປະຣິລາຫະ ທຳມະລາພະເກີດຂຶ້ນຍ້ອນອາໄສທຳມະປະຣິເຍສະນາ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງສັນຍາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງສັງກັບປະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ຯລຯ ຄວາມຕ່າງແຫ່ງລາພະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິເຍສະນາເປັນແນວນີ້

**ພາຫິຣະຜັດສະນານັດຕະສູດທີ ໗ ຈົບ**

# ໑໐. ທຸຕິຍະພາຫິຣະຜັດສະນານັດຕະສູດ

## ວ່າດ້ວຍຄວາມຕ່າງແຫ່ງຜັດສະຍ້ອນອາໄສທາດພາຍນອກ ສູດທີ ໘

[໘໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງສັນຍາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງສັງກັບປະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ຜັດສະ ຯລຯ ເວທະນາ ຯລຯ ສັນທະ ຯລຯ ປະຣິລາຫະ ຯລຯ ຄວາມຕ່າງແຫ່ງລາພະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິເຍສະນາ

ຄວາມຕ່າງແຫ່ງປະຣິເຍສະນາບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງລາພະ ຄວາມຕ່າງແຫ່ງປະຣິລາຫະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິເຍສະນາ ຄວາມຕ່າງແຫ່ງສັນທະບໍ່ເກີດຂຶ້ນ ຍ້ອນອາໄສຄວາມຕ່າງແຫ່ງປະຣິລາຫະ ຯລຯ ເວທະນາ ຯລຯ ຜັດສະ ຯລຯ ສັງກັບປະ ຯລຯ ຄວາມຕ່າງແຫ່ງສັນຍາບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັງກັບປະ ຄວາມຕ່າງແຫ່ງທາດບໍ່ເກີດຂຶ້ນ ຍ້ອນອາໄສຄວາມຕ່າງແຫ່ງສັນຍາ

ຄວາມຕ່າງແຫ່ງທາດ ເປັນແນວໃດ?

ຄື ຮູບທາດ ຯລຯ ທຳມະທາດ

ນີ້ເຮົາຮຽກວ່າ ຄວາມຕ່າງແຫ່ງທາດ

ຄວາມຕ່າງແຫ່ງສັນຍາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງສັງກັບປະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ຯລຯ ຜັດສະ ຯລຯ ເວທະນາ ຯລຯ ສັນທະ ຯລຯ ປະຣິລາຫະ ຯລຯ ປະຣິເຍສະນາ ຯລຯ ຄວາມຕ່າງແຫ່ງລາພະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິເຍສະນາ

ຄວາມຕ່າງແຫ່ງປະຣິເຍສະນາບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງລາພະ ຯລຯ ປະຣິລາຫະ ຯລຯ ສັນທະ ຯລຯ ເວທະນາ ຯລຯ ຄວາມຕ່າງແຫ່ງຜັດສະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງເວທະນາ ຄວາມຕ່າງແຫ່ງສັນຍາບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັງກັບປະ ຄວາມຕ່າງແຫ່ງທາດບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ເປັນແນວໃດ?

ຄື ຮູບສັນຍາເກີດຂຶ້ນຍ້ອນອາໄສຮູບທາດ ຯລຯ ທຳມະສັນຍາເກີດຂຶ້ນຍ້ອນອາໄສທຳມະທາດ (ທຳມະສັງກັບປະ) ເກີດຂຶ້ນຍ້ອນອາໄສທຳມະສັນຍາ ຯລຯ ທຳມະປະຣິເຍສະນາເກີດຂຶ້ນຍ້ອນອາໄສທຳມະປະຣິລາຫະ ທຳມະລາພະເກີດຂຶ້ນຍ້ອນອາໄສທຳມະປະຣິເຍສະນາ

ທຳມະປະຣິເຍສະນາບໍ່ເກີດຂຶ້ນຍ້ອນອາໄສທຳມະລາພະ ທຳມະປະຣິລາຫະບໍ່ເກີດຂຶ້ນຍ້ອນອາໄສທຳມະປະຣິເຍສະນາ ທຳມະສັນທະບໍ່ເກີດຂຶ້ນຍ້ອນອາໄສທຳມະປະຣິລາຫະ ທຳມະສຳຜັດສະຊາ ເວທະນາບໍ່ເກີດຂຶ້ນຍ້ອນອາໄສທຳມະສັນທະ ທຳມະສຳຜັດບໍ່ເກີດຂຶ້ນຍ້ອນອາໄສທຳມະສຳຜັດສະຊາເວທະນາ ທຳມະສັງກັບປະບໍ່ເກີດຂຶ້ນຍ້ອນອາໄສທຳມະສຳຜັດ ທຳມະສັນຍາບໍ່ເກີດຂຶ້ນຍ້ອນອາໄສທຳມະສັງກັບປະ ທຳມະທາດບໍ່ເກີດຂຶ້ນຍ້ອນອາໄສທຳມະສັນຍາ

ພິກຂຸທັງຫຼາຍ ຄວາມຕ່າງແຫ່ງສັນຍາເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງທາດ ຄວາມຕ່າງແຫ່ງສັງກັບປະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ຜັດສະ ຯລຯ ເວທະນາ ຯລຯ ສັນທະ ຯລຯ ປະຣິລາຫະ ຯລຯ ປະຣິເຍສະນາ ຯລຯ ຄວາມຕ່າງແຫ່ງລາພະເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິເຍສະນາ

ຄວາມຕ່າງແຫ່ງປະຣິເຍສະນາບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງລາພະ ຄວາມຕ່າງແຫ່ງປະຣິລາຫະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິເຍສະນາ ຄວາມຕ່າງແຫ່ງສັນທະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງປະຣິລາຫະ ຄວາມຕ່າງແຫ່ງເວທະນາບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນທະ ຄວາມຕ່າງແຫ່ງຜັດສະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງເວທະນາ ຄວາມຕ່າງແຫ່ງສັງກັບປະບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງຜັດສະ ຄວາມຕ່າງແຫ່ງສັນຍາບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັງກັບປະ ຄວາມຕ່າງແຫ່ງທາດບໍ່ເກີດຂຶ້ນຍ້ອນອາໄສຄວາມຕ່າງແຫ່ງສັນຍາ ເປັນແນວນີ້

**ທຸຕິຍະພາຫິຣະຜັດສະນານັດຕະສູດທີ ໑໐ ຈົບ**

**ນານັດຕະວັກທີ່ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໔. ທຸຕິຍະວັກ

## ໝວດທີ່ ໔

# ໑. ສັດຕະທາດສູດ

## ວ່າດ້ວຍທາດ ໗

[໙໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ທາດມີ ໗ ປະການ ທາດ ໗ ປະການອັນໃດແດ່ ຄື

໑. ອາພາທາດ
໒. ສຸພະທາດ
໓. ອາກາສານັນຈາຍະຕະນະທາດ
໔. ວິນຍານັນຈາຍະຕະນະທາດ
໕. ອາກິນຈັນຍາຍະຕະນະທາດ
໖. ເນວະສັນຍານາສັນຍາຍະຕະນະທາດ
໗. ສັນຍາເວທະຍິຕະນິໂຣດທາດ

ທາດມີ ໗ ປະການນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດ ຢ່າງນີ້ແລ້ວ ພິກສຸຮູບໜຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ອາພາທາດ ສຸພະທາດ ອາກາສານັນຈາຍະຕະນະທາດວິນຍານັນຈາຍະຕະນະທາດ ອາກິນຈັນຍາຍະຕະນະທາດ ເນວະສັນຍານາສັນຍາຍະຕະນະທາດ ແລະ ສັນຍາເວທະຍິຕະນິໂຣດທາດ ທາດເຫຼົ່ານີ້ອາໄສອັນໃດຈຶ່ງຜາກົດໄດ້

ພິກຂຸ ອາພາທາດອາໄສຄວາມມືດຈຶ່ງຜາກົດໄດ້ ສຸພະທາດອາໄສຄວາມບໍ່ງາມຈຶ່ງຜາກົດໄດ້ ອາກາສານັນຈາຍະຕະນະທາດອາໄສຮູບສະມາບັດຈຶ່ງຜາກົດໄດ້ ວິນຍານັນຈາຍະຕະນະທາດອາໄສອາກາສານັນຈາຍະຕະນະສະມາບັດຈຶ່ງຜາກົດໄດ້ ອາກິນຈັນຍາຍະຕະນະທາດອາໄສວິນຍານັນຈາຍະຕະນະສະມາບັດຈຶ່ງຜາກົດໄດ້ ເນວະສັນຍານາສັນຍາຍະຕະນະທາດອາໄສ ອາກິນຈັນຍາຍະຕະນະສະມາບັດຈຶ່ງຜາກົດໄດ້ ສັນຍາເວທະຍິຕະນິໂຣດທາດອາໄສນິໂຣທະສະມາບັດຈຶ່ງຜາກົດໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ອາພາທາດ ສຸພະທາດ ອາກາສານັນຈາຍະຕະນະທາດ ວິນຍານັນຈາຍະຕະນະທາດ ອາກິນຈັນຍາຍະຕະນະທາດ ເນວະສັນຍານາສັນຍາຍະຕະນະທາດ ແລະສັນຍາເວທະຍິຕະນິໂຣດທາດ ບຸກຄົນຈະເຂົ້າເຖິງທາດເຫຼົ່ານີ້ໄດ້ແນວໃດ?

ພິກຂຸ ອາພາທາດ ສຸພະທາດ ອາກາສານັນຈາຍະຕະນະທາດ ວິນຍານັນຈາຍະຕະນະທາດ ອາກິນຈັນຍາຍະຕະນະທາດ ທາດເຫຼົ່ານີ້ ເປັນສັນຍາສະມາບັດທີ່ບຸກຄົນຈະເຂົ້າເຖິງໄດ້ ເນວະສັນຍານາສັນຍາຍະຕະນະທາດ ເປັນສັງຂາຣາວິເສສະສະມາບັດທີ່ບຸກຄົນຈະເຂົ້າເຖິງໄດ້ ສັນຍາເວທະຍິຕະນິໂຣດທາດ ເປັນນິໂຣທະສະມາບັດທີ່ບຸກຄົນຈະເຂົ້າເຖິງໄດ້

**ສັດຕະທາດສູດທີ ໑ ຈົບ**

# ໘. ສະນິທານະສູດ

## ວ່າດ້ວຍທຳທີ່ເປັນຕົ້ນເຫດ

[໙໓] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ກາມວິຕົກມີເຫດຈຶ່ງເກີດຂຶ້ນ ບໍ່ມີເຫດບໍ່ເກີດຂຶ້ນ ພະຍາບາດວິຕົກ ມີເຫດຈຶ່ງເກີດຂຶ້ນ ບໍ່ມີເຫດບໍ່ເກີດຂຶ້ນ ວິຫິງສາວິຕົກມີເຫດຈຶ່ງເກີດຂຶ້ນ ບໍ່ມີເຫດບໍ່ເກີດຂຶ້ນ

ກາມວິຕົກມີເຫດຈຶ່ງເກີດຂຶ້ນ ບໍ່ມີເຫດບໍ່ເກີດຂຶ້ນ ພະຍາບາດວິຕົກມີເຫດຈຶ່ງເກີດຂຶ້ນ ບໍ່ມີເຫດບໍ່ເກີດຂຶ້ນ ວິຫິງສາວິຕົກມີເຫດຈຶ່ງເກີດຂຶ້ນ ບໍ່ມີເຫດບໍ່ເກີດຂຶ້ນ ເປັນແນວໃດ?

ກາມສັນຍາ (ຄວາມໝາຍຮູ້ກາມ) ເກີດຂຶ້ນຍ້ອນອາໄສກາມທາດ ກາມສັງກັບປະ (ຄວາມດຳຣິໃນກາມ) ເກີດຂຶ້ນຍ້ອນອາໄສກາມສັນຍາ ກາມສັນທະ (ຄວາມພໍໃຈໃນກາມ) ເກີດຂຶ້ນຍ້ອນອາໄສກາມສັງກັບປະ ກາມປະຣິລາຫະ (ຄວາມຮ້ອນຮົນຍ້ອນກາມ) ເກີດຂຶ້ນຍ້ອນອາໄສກາມສັນທະ ກາມປະຣິເຍສະນາ (ການສະແຫວງຫາກາມ) ເກີດຂຶ້ນຍ້ອນອາໄສ ກາມປະຣິລາຫະ ປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອສະແຫວງຫາກາມປະຣິເຍສະນາ ຍ່ອມປະຕິບັດຜິດ ໓ ທາງ ຄື ທາງກາຍ ທາງວາຈາ ທາງໃຈ

ພະຍາບາດສັນຍາ (ຄວາມໝາຍຮູ້ພະຍາບາດ) ເກີດຂຶ້ນຍ້ອນອາໄສພະຍາບາດທາດ ພະຍາບາດສັງກັບປະ (ຄວາມດຳຣິໃນພະຍາບາດ) ເກີດຂຶ້ນຍ້ອນອາໄສພະຍາບາດສັນຍາ ຯລຯ

ພະຍາບາດສັນທະ (ຄວາມພໍໃຈໃນພະຍາບາດ) ฯลฯ ພະຍາບາດປະຣິລາຫະ (ຄວາມຮ້ອນຮົນຍ້ອນພະຍາບາດ) ฯลฯ ພະຍາບາດປະຣິເຍສະນາ (ການສະແຫວງຫາພະຍາບາດ)

ປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອສະແຫວງຫາພະຍາບາດປະຣິເຍສະນາ ຍ່ອມປະຕິບັດຜິດ ໓ ທາງ ຄື ທາງກາຍ ທາງວາຈາ ທາງໃຈ

ວິຫິງສາສັນຍາ (ຄວາມໝາຍຮູ້ຄວາມບຽດບຽນ) ເກີດຂຶ້ນຍ້ອນອາໄສວິຫິງສາທາດວິຫິງສາສັງກັບປະ (ຄວາມດຳຣິໃນຄວາມບຽດບຽນ) ເກີດຂຶ້ນຍ້ອນອາໄສວິຫິງສາສັນຍາ ฯลฯ ວິຫິງສາສັນທະ (ຄວາມພໍໃຈໃນຄວາມບຽດບຽນ) ฯลฯ ວິຫິງສາປະຣິລາຫະ (ຄວາມຮ້ອນຮົນຍ້ອນຄວາມບຽດບຽນ) ฯลฯ ວິຫິງສາປະຣິເຍສະນາ (ການສະແຫວງຫາຄວາມບຽດບຽນ)

ປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອສະແຫວງຫາວິຫິງສາປະຣິເຍສະນາ ຍ່ອມປະຕິບັດຜິດ ໓ ທາງ ຄື ທາງກາຍ ທາງວາຈາ ທາງໃຈ

ພິກຂຸທັງຫຼາຍ ປຽບຄື ບຸຣຸດວາງມັດຫຍ້າທີ່ໄຟຕິດແລ້ວໃນປ່າຫຍ້າແຫ້ງ ຫາກເຂົາບໍ່ຟ້າວດັບດ້ວຍມືແລະດ້ວຍຕີນ ເມື່ອເປັນແບບນີ້ ບັນດາສັດມີຊີວິດທີ່ອາໄສຫຍ້າແລະໄມ້ຢູ່ ເພິ່ງເຖິງຄວາມພິນາດຍ່ອຍຍັບ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ສະມະນະຫຼືພາມຄົນໃດຄົນໜຶ່ງ ບໍ່ຟ້າວລະ ບັນເທົາ ເຮັດໃຫ້ໝົດໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງອະກຸສົນສັນຍາທີ່ເກີດຂຶ້ນບໍ່ສະໝ່ຳສະເໝີ ສະມະນະຫຼືພາມນັ້ນຍ່ອມຢູ່ເປັນທຸກ ມີຄວາມອຶດອັດ ຄວາມຄັບແຄ້ນ ຄວາມຮ້ອນຮົນໃນປັດຈຸບັນ ຫຼັງຈາກຕາຍແລ້ວເພິ່ງຫວັງທຸກຄະຕິໄດ້

ເນກຂຳມະວິຕົກ (ຄວາມນຶກໃນການອອກບວດ) ມີເຫດຈຶ່ງເກີດຂຶ້ນ ບໍ່ມີເຫດບໍ່ເກີດຂຶ້ນ ອະພະຍາບາດວິຕົກ (ຄວາມນຶກໃນຄວາມບໍ່ພະຍາບາດ) ມີເຫດຈຶ່ງເກີດຂຶ້ນ ບໍ່ມີເຫດບໍ່ເກີດຂຶ້ນ ອະວິຫິງສາວິຕົກ (ຄວາມນຶກໃນຄວາມບໍ່ບຽດບຽນ) ມີເຫດຈຶ່ງເກີດຂຶ້ນ ບໍ່ມີເຫດບໍ່ເກີດຂຶ້ນ

ເນກຂຳມະວິຕົກມີເຫດຈຶ່ງເກີດຂຶ້ນ ບໍ່ມີເຫດບໍ່ເກີດຂຶ້ນ ອະພະຍາບາດວິຕົກມີເຫດຈຶ່ງເກີດຂຶ້ນ ບໍ່ມີເຫດບໍ່ເກີດຂຶ້ນ ອະວິຫິງສາວິຕົກມີເຫດຈຶ່ງເກີດຂຶ້ນ ບໍ່ມີເຫດບໍ່ເກີດຂຶ້ນເປັນແບບໃດ?

ຄື ເນກຂຳມະສັນຍາເກີດຂຶ້ນຍ້ອນອາໄສເນກຂຳມະທາດ ເນກຂຳມະສັງກັບປະເກີດຂຶ້ນຍ້ອນອາໄສເນກຂຳມະສັນຍາ ເນກຂຳມະສັນທະເກີດຂຶ້ນຍ້ອນອາໄສເນກຂຳມະສັງກັບປະ ເນກຂຳມະປະຣິລາຫະເກີດຂຶ້ນຍ້ອນອາໄສເນກຂຳມະສັນທະ ເນກຂຳມະປະຣິເຍສະນາເກີດຂຶ້ນ ຍ້ອນອາໄສເນກຂຳມະປະຣິລາຫະ ອະຣິຍະສາວົກຜູ້ໄດ້ສະດັບ ເມື່ອສະແຫວງຫາເນກຂຳມະປະຣິເຍສະນາ ຍ່ອມປະຕິບັດຊອບ ໓ ທາງ ຄື ທາງກາຍ ທາງວາຈາ ທາງໃຈ

ອະພະຍາບາດສັນຍາເກີດຂຶ້ນຍ້ອນອາໄສອະພະຍາບາດທາດ ອະພະຍາບາດສັງກັບປະເກີດຂຶ້ນຍ້ອນອາໄສອະພະຍາບາດສັນຍາ ຯລຯ ອະພະຍາບາດສັນທະ ຯລຯ ອະພະຍາບາດປະຣິລາຫະ ຯລຯ ອະພະຍາບາດປະຣິເຍສະນາ

ອະຣິຍະສາວົກຜູ້ໄດ້ສະດັບ ເມື່ອສະແຫວງຫາອະພະຍາບາດປະຣິເຍສະນາ ຍ່ອມປະຕິບັດຊອບ ໓ ທາງ ຄື ທາງກາຍ ທາງວາຈາ ທາງໃຈ

ອະວິຫິງສາສັນຍາເກີດຂຶ້ນຍ້ອນອາໄສອະວິຫິງສາທາດ ອະວິຫິງສາສັງກັບປະເກີດຂຶ້ນຍ້ອນອາໄສອະວິຫິງສາສັນຍາ ອະວິຫິງສາສັນທະເກີດຂຶ້ນຍ້ອນອາໄສອະວິຫິງສາສັງກັບປະ ອະວິຫິງສາປະຣິລາຫະເກີດຂຶ້ນຍ້ອນອາໄສອະວິຫິງສາສັນທະ ອະວິຫິງສາປະຣິເຍສະນາເກີດຂຶ້ນຍ້ອນອາໄສອະວິຫິງສາປະຣິລາຫະ ອະຣິຍະສາວົກຜູ້ໄດ້ສະດັບ ເມື່ອສະແຫວງຫາອະວິຫິງສາປະຣິເຍສະນາ ຍ່ອມປະຕິບັດຊອບ ໓ ທາງ ຄື ທາງກາຍ ທາງວາຈາ ທາງໃຈ

ພິກຂຸທັງຫຼາຍ ປຽບຄື ບຸຣຸດວາງມັດຫຍ້າທີ່ໄຟຕິດແລ້ວໃນປ່າຫຍ້າແຫ້ງ ເຂົາຟ້າວດັບມັດຫຍ້ານັ້ນດ້ວຍມືແລະດ້ວຍຕີນ ເມື່ອເປັນແນວນີ້ ບັນດາສັດມີຊີວິດທີ່ອາໄສຫຍ້າແລະໄມ້ຢູ່ ຈຶ່ງບໍ່ເຖິງຄວາມພິນາດຍ່ອຍຍັບ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ສະມະນະຫຼືພາມຄົນໃດຄົນໜຶ່ງຟ້າວລະ ບັນເທົາ ເຮັດໃຫ້ໝົດໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງ ອະກຸສົນສັນຍາທີ່ເກີດຂຶ້ນບໍ່ສະໝ່ຳສະເໝີ ສະມະນະຫຼືພາມນັ້ນຍ່ອມຢູ່ເປັນສຸກ ບໍ່ມີຄວາມອຶດອັດ ຄວາມຄັບແຄ້ນ ຄວາມຮ້ອນຮົນໃນປັດຈຸບັນ ຫຼັງຈາກຕາຍແລ້ວເພິ່ງຫວັງ ສຸກຄະຕິໄດ້

**ສະນິທານະສູດທີ ໘ ຈົບ**

# ໙. ຄິນຊະກາວະສະຖະສູດ

## ວ່າດ້ວຍການສະແດງທຳໃນຕຳໜັກດິນຈີ່

[໙໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຕຳໜັກດິນຈີ່ ໃກ້ໝູ່ບ້ານ ຍາຕິກະໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ສັນຍາເກີດຂຶ້ນຍ້ອນອາໄສທາດ ທິດຖິເກີດຂຶ້ນຍ້ອນອາໄສທາດ ວິຕົກເກີດຂຶ້ນຍ້ອນອາໄສທາດ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດ ຢ່າງນີ້ແລ້ວທ່ານພຣະກັດຈານະໄດ້ທູນຖາມພຣະຜູ້ມີພຣະພາກດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ທິດຖິທີ່ວ່າ ພຣະສຳມາສຳພຸດທະເຈົ້າ ໃນບຸກຄົນທີ່ບໍ່ແມ່ນພຣະສຳມາສຳພຸດທະເຈົ້າ ນີ້ຍ່ອມຜາກົດຍ້ອນອາໄສອັນໃດ

ກັດຈານະ ທາດຄືອະວິດຊານີ້ ເປັນທາດໃຫຍ່ ສັນຍາທີ່ຊົ່ວ ທິດຖິທີ່ຊົ່ວ ວິຕົກທີ່ຊົ່ວ ເຈຕະນາທີ່ຊົ່ວ ຄວາມປາຖະໜາທີ່ຊົ່ວ ຄວາມຕັ້ງໃຈທີ່ຊົ່ວ ບຸກຄົນທີ່ຊົ່ວ ວາຈາທີ່ຊົ່ວ ເກີດຂຶ້ນຍ້ອນອາໄສທາດທີ່ຊົ່ວ ບຸກຄົນທີ່ຊົ່ວນັ້ນ ຍ່ອມບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍເຊິ່ງທຳທີ່ຊົ່ວ ເຮົາກ່າວວ່າ ຄວາມເກີດຂອງບຸກຄົນນັ້ນຊົ່ວ

ສັນຍາທີ່ປານກາງ ທິດຖິທີ່ປານກາງ ວິຕົກທີ່ປານກາງ ເຈຕະນາທີ່ປານກາງ ຄວາມປາຖະໜາທີ່ປານກາງ ຄວາມຕັ້ງໃຈທີ່ປານກາງ ບຸກຄົນທີ່ປານກາງ ວາຈາທີ່ປານກາງ ເກີດຂຶ້ນຍ້ອນອາໄສທາດທີ່ປານກາງ ບຸກຄົນທີ່ປານກາງນັ້ນ ຍ່ອມບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ເຊິ່ງທຳທີ່ປານກາງ ເຮົາກ່າວວ່າ ຄວາມເກີດຂອງບຸກຄົນນັ້ນປານກາງ

ກັດຈານະ ສັນຍາທີ່ປະນີດ ທິດຖິທີ່ປະນີດ ວິຕົກທີ່ປະນີດ ເຈຕະນາທີ່ປະນີດ ຄວາມປາຖະໜາທີ່ປະນີດ ຄວາມຕັ້ງໃຈທີ່ປະນີດ ບຸກຄົນທີ່ປະນີດ ວາຈາທີ່ປະນີດ ເກີດຂຶ້ນຍ້ອນອາໄສທາດທີ່ປະນີດ ບຸກຄົນທີ່ປະນີດນັ້ນ ຍ່ອມບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍເຊິ່ງທຳທີ່ປະນີດ ເຮົາກ່າວວ່າ ຄວາມເກີດຂອງບຸກຄົນນັ້ນປະນີດ

**ຄິນຊະກາວະສະຖະສູດທີ ໑ ຈົບ**

# ໔. ຮີນາທິມຸດຕິກະສູດ

## ວ່າດ້ວຍສັດຜູ້ມີອັດທະຍາໄສຊົ່ວແລະອັດທະຍາໄສງາມ

[໙໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສັດທັງຫຼາຍຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ສັດທັງຫຼາຍຜູ້ມີອັດທະຍາໄສງາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສງາມ

ແມ່ນໃນອະດີດ ສັດທັງຫຼາຍກໍໄດ້ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ໄດ້ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ສັດທັງຫຼາຍຜູ້ມີອັດທະຍາໄສງາມ ໄດ້ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສງາມ

ແມ່ນໃນອະນາຄົດ ສັດທັງຫຼາຍກໍຈັກຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄືສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ຈັກຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ສັດທັງຫຼາຍຜູ້ມີອັດທະຍາໄສງາມ ຈັກຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສງາມ

ພິກຂຸທັງຫຼາຍ ແມ່ນໃນປັດຈຸບັນນີ້ ສັດທັງຫຼາຍຄົບຄ້າສະມາຄົມກັນໂດຍທາດແນວດຽວກັນຄື ສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີອັດທະຍາໄສຊົ່ວ ສັດທັງຫຼາຍຜູ້ມີອັດທະຍາໄສງາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສງາມ

**ຫີນາທິມຸດຕິກະສູດທີ ໔ ຈົບ**

# ໕. ຈັງກະມະສູດ

## ວ່າດ້ວຍການຈົງກົມ

[໙໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດເມືອງຣາຊະຄຶ ສະໄໝນັ້ນ ທ່ານພຣະສາຣີບຸດກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍໃນບ່ອນບໍ່ໄກພຣະຜູ້ມີພຣະພາກເຈົ້າ ທ່ານພຣະມະຫາໂມກຄັນລານະກໍກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍໃນບ່ອນບໍ່ໄກພຣະຜູ້ມີພຣະພາກເຈົ້າເຈົ້າ ທ່ານພຣະມະຫາກັດສະປະກໍກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍໃນບ່ອນບໍ່ໄກພຣະຜູ້ມີພຣະພາກເຈົ້າ ທ່ານພຣະອະນຸຣຸດທະກໍກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍໃນບ່ອນບໍ່ໄກພຣະຜູ້ມີພຣະພາກເຈົ້າ ທ່ານພຣະປຸນນະມັນຕານີບຸດກໍກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍໃນບ່ອນບໍ່ໄກພຣະຜູ້ມີພຣະພາກເຈົ້າ ທ່ານພຣະອຸບາລີກໍກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍໃນບ່ອນບໍ່ໄກພຣະຜູ້ມີພຣະພາກເຈົ້າ ທ່ານພຣະອານົນກໍກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍໃນບ່ອນບໍ່ໄກພຣະຜູ້ມີພຣະພາກເຈົ້າ ແມ່ນພຣະເທວະທັດກໍກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍໃນບ່ອນບໍ່ໄກພຣະຜູ້ມີພຣະພາກເຈົ້າ

## ບຸກຄົນຜູ້ມີອັດທະຍາໄສຄືກັນຈຶ່ງຄົບກັນໄດ້

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເຫັນສາຣີບຸດກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍບໍ?

ເຫັນ ຂ້ານ້ອຍ

ພິກຂຸທັງໝົດນີ້ ລ້ວນມີປັນຍາຫຼາຍ

ທ່ານທັງຫຼາຍ ເຫັນມະຫາໂມກຄັນລານະກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍບໍ?

ເຫັນ ຂ້ານ້ອຍ

ພິກຂຸທັງໝົດນີ້ ລ້ວນມີລິດຫຼາຍ

ທ່ານທັງຫຼາຍ ເຫັນມະຫາກັດສະປະກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍບໍ?

ເຫັນ ຂ້ານ້ອຍ

ພິກຂຸທັງໝົດນີ້ ລ້ວນກ່າວເລື້ອງທຸດົງ

ທ່ານທັງຫຼາຍ ເຫັນອະນຸຣຸດທະກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍບໍ?

ເຫັນ ຂ້ານ້ອຍ

ພິກຂຸທັງໝົດນີ້ ລ້ວນມີຕາທິບ

ທ່ານທັງຫຼາຍ ເຫັນປຸນນະມັນຕານີບຸດກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍບໍ?

ເຫັນ ຂ້ານ້ອຍ

ພິກຂຸທັງໝົດນີ້ ລ້ວນເປັນທຳມະກະຖຶກ

ທ່ານທັງຫຼາຍ ເຫັນອຸບາລີກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍບໍ?

ເຫັນ ຂ້ານ້ອຍ

ພິກຂຸທັງໝົດນີ້ ລ້ວນຊົງວິໄນ

ທ່ານທັງຫຼາຍ ເຫັນອານົນກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍບໍ?

ເຫັນ ຂ້ານ້ອຍ

ພິກຂຸທັງໝົດນີ້ ລ້ວນເປັນພະຫູສູດ

ທ່ານທັງຫຼາຍ ເຫັນເທວະທັດກຳລັງຍ່າງຈົງກົມຢູ່ກັບພິກຂຸຈຳນວນຫຼາຍບໍ?

ເຫັນ ຂ້ານ້ອຍ

ພິກຂຸທັງໝົດນີ້ ລ້ວນມີຄວາມປາຖະໜາຊົ່ວ

ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ສັດທັງຫຼາຍຜູ້ມີອັດທະຍາໄສງາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສງາມ

ແມ່ນໃນອະດີດ ສັດທັງຫຼາຍກໍໄດ້ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ໄດ້ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ສັດທັງຫຼາຍຜູ້ມີອັດທະຍາໄສງາມ ໄດ້ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສງາມ

ແມ່ນໃນອະນາຄົດ ສັດທັງຫຼາຍກໍຈັກຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ຈັກຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ສັດທັງຫຼາຍຜູ້ມີອັດທະຍາໄສງາມ ຈັກຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສງາມ

ພິກຂຸທັງຫຼາຍ ແມ່ນໃນປັດຈຸບັນນີ້ ສັດທັງຫຼາຍຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີອັດທະຍາໄສຊົ່ວ ສັດທັງຫຼາຍຜູ້ມີອັດທະຍາໄສງາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສງາມ

**ຈັງກະມະສູດທີ ໘ ຈົບ**

# ໙. ສະຄາຖາສູດ

## ວ່າດ້ວຍທຳມະເທດສະໜາທີ່ມີຄາຖາ

[໑໐໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ສັດຜູ້ມີອັດທະຍາໄສຄືກັນຈຶ່ງຄົບກັນໄດ້

ພິກຂຸທັງຫຼາຍ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ

ແມ່ນໃນອະດີດ ສັດທັງຫຼາຍ ໄດ້ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ
ແມ່ນໃນອະນາຄົດ ສັດທັງຫຼາຍ ຈັກຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ
ແມ່ນໃນປັດຈຸບັນນີ້ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ

ປຽບ ຄື ຄູດ (ອຸດຈາຣະ) ກັບຄູດລວມເຂົ້າກັນໄດ້ ມູດ (ປັດສາວະ) ກັບມູດລວມເຂົ້າກັນໄດ້ ເຂລະ (ນ້ຳລາຍ) ກັບເຂລະລວມເຂົ້າກັນໄດ້ ປຸບໂພ (ນ້ຳໜອງ)ກັບປຸບໂພຮວມເຂົ້າກັນໄດ້ ໂລຫິດ(ເລືອດ)ກັບໂລຫິດລວມເຂົ້າກັນໄດ້ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ສັດທັງຫຼາຍຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍ ຜູ້ມີອັດທະຍາໄສຊົ່ວ ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີອັດທະຍາໄສຊົ່ວ

ແມ່ນໃນອະດີດ ຯລຯ
ແມ່ນໃນອະນາຄົດ ຯລຯ

ແມ່ນໃນປັດຈຸບັນນີ້ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄືສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສຊົ່ວ

ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີອັດທະຍາໄສງາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສງາມ

ແມ່ນໃນອະດີດ ສັດທັງຫຼາຍ ໄດ້ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີອັດທະຍາໄສງາມ ໄດ້ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສງາມ

ແມ່ນໃນອະນາຄົດ ສັດທັງຫຼາຍ ຈັກຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີອັດທະຍາໄສງາມ ຈັກຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສງາມ

ແມ່ນໃນປັດຈຸບັນນີ້ ສັດທັງຫຼາຍຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີອັດທະຍາໄສງາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສງາມ

ປຽບຄື ນ້ຳນົມສົດກັບນ້ຳນົມສົດລວມເຂົ້າກັນໄດ້ ນ້ຳມັນກັບນ້ຳມັນລວມເຂົ້າກັນໄດ້ ເນີຍໃສກັບເນີຍໃສລວມເຂົ້າກັນໄດ້ ນ້ຳເຜີ້ງກັບນ້ຳເຜີ້ງລວມເຂົ້າກັນໄດ້ ນ້ຳອ້ອຍກັບນ້ຳອ້ອຍລວມເຂົ້າກັນໄດ້ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍ ຜູ້ມີອັດທະຍາໄສງາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອັດທະຍາໄສງາມ

ແມ່ນໃນອະດີດ ຯລຯ
ແມ່ນໃນອະນາຄົດ ຯລຯ

ພິກຂຸທັງຫຼາຍ ແມ່ນໃນປັດຈຸບັນນີ້ ສັດທັງຫຼາຍຄົບຄ້າສະມາຄົມກັນໂດຍທາດ ແນວດຽວກັນ ຄື ສັດທັງຫຼາຍ ຜູ້ມີອັດທະຍາໄສງາມ ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີອັດທະຍາໄສງາມ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປ ວ່າ

ປ່າຄືກິເລດ ເກີດຍ້ອນການຄຸກຄີກັນ
ຍ່ອມຂາດໄປ ຍ້ອນການບໍ່ຄຸກຄີກັນ
ບຸກຄົນເກາະຂອນໄມ້ນ້ອຍເພິ່ງຈົມລົງໃນແມ່ນ້ຳໃຫຍ່ສັນໃດ
ແມ່ນສາທຸຊົນອາໄສຄົນຂີ້ຄ້ານກໍຍ່ອມຈົມລົງສັນນັ້ນ

ຍ້ອນແນວນັ້ນ ເພິ່ງເວັ້ນຄົນຂີ້ຄ້ານ
ຜູ້ມີຄວາມພຽນທຍ່ອນຍານນັ້ນສາ
ເພິ່ງຢູ່ຮ່ວມກັບບັນດິດຜູ້ສະຫງັດ ເປັນອະຣິຍະ
ມີໃຈເດັດດ່ຽວ ເພ່ງທໍາ ຜາຣົບຄວາມພຽນຢູ່ສະເໝີ

**ສະຄາຖາສູດທີ ໖ ຈົບ**

# ໗. ອັດສັດທະສັງສັນທະນະສູດ

## ວ່າດ້ວຍການຄົບຄ້າສະມາຄົມກັນຂອງສັດຜູ້ບໍ່ມີສັດທາ

[໑໐໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ບໍ່ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີສັດທາ ສັດທັງຫຼາຍຜູ້ບໍ່ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີຫິຣິ ສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ສັດທັງຫຼາຍຜູ້ມີສຸຕະໜ້ອຍ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຸຕະໜ້ອຍ ສັດທັງຫຼາຍຜູ້ຂີ້ຄ້ານ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຂີ້ຄ້ານ ສັດທັງຫຼາຍຜູ້ມີສະຕິຫຼົງລືມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສະຕິຫຼົງລືມ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ແມ່ນໃນອະດີດ ສັດທັງຫຼາຍໄດ້ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄືສັດທັງຫຼາຍຜູ້ບໍ່ມີສັດທາ ໄດ້ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີສັດທາ ສັດທັງຫຼາຍຜູ້ບໍ່ມີຫິຣິໄດ້ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ບໍ່ມີຫິຣິສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ໄດ້ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ສັດທັງຫຼາຍຜູ້ມີສຸຕະໜ້ອຍ ໄດ້ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຸຕະໜ້ອຍ ສັດທັງຫຼາຍຜູ້ຂີ້ຄ້ານ ໄດ້ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຂີ້ຄ້ານ ສັດທັງຫຼາຍຜູ້ມີສະຕິຫຼົງລືມ ໄດ້ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສະຕິຫຼົງລືມ ສັດທັງຫຼາຍຜູ້ມີປັນຍາຊາມ ໄດ້ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ແມ່ນໃນອະນາຄົດ ສັດທັງຫຼາຍຈັກຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ບໍ່ມີສັດທາ ຈັກຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີສັດທາສັດທັງຫຼາຍ ຜູ້ບໍ່ມີຫິຣິ ຈັກຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີຫິຣິ ສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ຯລຯ ກັບສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ສັດທັງຫຼາຍຜູ້ມີສຸຕະໜ້ອຍ ຯລຯ ກັບສັດທັງຫຼາຍຜູ້ມີສຸຕະໜ້ອຍ ສັດທັງຫຼາຍຜູ້

ຂີ້ຄ້ານ ຯລຯ ກັບສັດທັງຫຼາຍຜູ້ຂີ້ຄ້ານ ສັດທັງຫຼາຍຜູ້ມີສະຕິຫຼົງລືມ ຯລຯ ກັບສັດທັງຫຼາຍຜູ້ມີສະຕິຫຼົງລືມ ສັດທັງຫຼາຍຜູ້ມີປັນຍາຊາມ ຈັກຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ແມ່ນໃນປັດຈຸບັນນີ້ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ບໍ່ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີສັດທາ ສັດທັງຫຼາຍຜູ້ບໍ່ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີຫິຣິ ຯລຯ ສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ຯລຯ ກັບສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ສັດທັງຫຼາຍຜູ້ມີສຸຕະໜ້ອຍ ຯລຯ ກັບສັດທັງຫຼາຍຜູ້ມີສຸຕະໜ້ອຍ ສັດທັງຫຼາຍຜູ້ຂີ້ຄ້ານ ຯລຯ ກັບສັດທັງຫຼາຍຜູ້ຂີ້ຄ້ານ ສັດທັງຫຼາຍຜູ້ມີສະຕິຫຼົງລືມ ຯລຯ ກັບສັດທັງຫຼາຍຜູ້ມີສະຕິຫຼົງລືມ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ພິກຂຸທັງຫຼາຍ ສັດທັງຫຼາຍຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສັດທາ ສັດທັງຫຼາຍຜູ້ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີຫິຣິ ສັດທັງຫຼາຍຜູ້ມີໂອດຕັບປະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີໂອດຕັບປະ ສັດທັງຫຼາຍຜູ້ມີສຸຕະຫຼາຍ ຄົບຄ້າສະມາຄົມກັບສັ ທັງຫຼາຍຜູ້ມີສຸຕະຫຼາຍ ສັດທັງຫຼາຍຜູ້ຜາຣົບຄວາມພຽນ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຜາຣົບຄວາມພຽນ ສັດທັງຫຼາຍຜູ້ມີສະຕິໝັ້ນຄົງ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສະຕິໝັ້ນຄົງ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ

ແມ່ນໃນອະດີດ ຯລຯ
ແມ່ນໃນອະນາຄົດ ຯລຯ

ພິກຂຸທັງຫຼາຍ ແມ່ນໃນປັດຈຸບັນນີ້ ສັດທັງຫຼາຍຄົບຄ້າສະມາຄົມກັນ ຯລຯ

**ອັດສັດທະສັງສັນທະນະສູດທີ ໗ ຈົບ**

# ๘. ອັດສັດທະມູລະກະສູດ

## ວ່າດ້ວຍສັດຜູ້ບໍ່ມີສັດທາເປັນມູນ

[໑໐໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ບໍ່ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີສັດທາ ສັດທັງຫຼາຍຜູ້ບໍ່ມີຫິຣິ ຄົບຄ້າສະມາ

ຄົນກັບສັດທັງຫຼາຍຜູ້ບໍ່ມີຫິຣິ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສັດທາ ສັດທັງຫຼາຍຜູ້ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີຫິຣິ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ

ແມ່ນໃນອະດີດ ສັດທັງຫຼາຍ ໄດ້ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຯລຯ
ແມ່ນໃນອະນາຄົດ ສັດທັງຫຼາຍ ຈັກຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຯລຯ

ແມ່ນໃນປັດຈຸບັນນີ້ ສັດທັງຫຼາຍ ກໍຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ບໍ່ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີສັດທາ ສັດທັງຫຼາຍຜູ້ບໍ່ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີຫິຣິ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສັດທາ ສັດທັງຫຼາຍ ຜູ້ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີຫິຣິ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມ ກັບສັດທັງຫຼາຍຜູ້ມີປັນຍາ (໑)

ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ບໍ່ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີສັດທາ ສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍຜູ້ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສັດທາ ສັດທັງຫຼາຍຜູ້ມີໂອດຕັບປະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີໂອດຕັບປະ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ ຯລຯ (ເພິ່ງຮູ້ຄວາມພິດສະດານຄືໃນວາຣະທຳອິດ) (໔)

ສັດທັງຫຼາຍ ຯລຯ ໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ບໍ່ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີສັດທາ ສັດທັງຫຼາຍຜູ້ມີສຸຕະໜ້ອຍ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຸຕະໜ້ອຍ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສັດທາ ສັດທັງຫຼາຍຜູ້ມີສຸຕະຫຼາຍ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຸຕະຫຼາຍ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ ຯລຯ (໓)

ສັດທັງຫຼາຍ ຯລຯ ໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ບໍ່ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີສັດທາ ສັດທັງຫຼາຍຜູ້ຂີ້ຄ້ານ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຂີ້ຄ້ານ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສັດທາ ສັດທັງຫຼາຍຜູ້ຜາຣົບຄວາມພຽນ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຜາຣົບຄວາມພຽນ ສັດທັງຫຼາຍ ຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ ຯລຯ (໔)

ພິກຂຸທັງຫຼາຍ ສັດທັງຫຼາຍ ຯລຯ ໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ບໍ່ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີສັດທາ ສັດທັງຫຼາຍຜູ້ມີສະຕິຫຼົງລືມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສະຕິຫຼົງລືມ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສັດທາສັດທັງຫຼາຍ ຜູ້ມີສະຕິໝັ້ນຄົງ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສະຕິໝັ້ນຄົງ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ ຯລຯ (໕)

**ອັດສັດທະມູລະກະສູດທີ ໗ ຈົບ**

# ໘. ອະຫິຣິກະມູລະກະສູດ

## ວ່າດ້ວຍສັດຜູ້ບໍ່ມີຫິຣິເປັນມູນ

[໑໐໓] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ບໍ່ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີຫິຣິ ສັດທັງຫຼາຍຜູ້ບໍ່ມີ ໂອດຕັບປະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ສັດທັງຫຼາຍຜູ້ມີ ປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີຫິຣິ (ຄວາມລະອາຍຕໍ່ບາບ) ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີຫິຣິ ສັດທັງຫຼາຍຜູ້ມີໂອດຕັບປະ (ຄວາມເກງກົວຕໍ່ບາບ) ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີໂອດຕັບປະ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ ຯລຯ (໑)

ສັດທັງຫຼາຍ ຜູ້ບໍ່ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີຫິຣິ ສັດທັງຫຼາຍຜູ້ມີສຸຕະໜ້ອຍ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຸຕະໜ້ອຍ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີຫິຣິ ສັດທັງຫຼາຍຜູ້ມີສຸຕະຫຼາຍ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຸຕະຫຼາຍ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ ຯລຯ (໘)

ສັດທັງຫຼາຍ ຜູ້ບໍ່ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີຫິຣິ ສັດທັງຫຼາຍ ຜູ້ຂີ້ຄ້ານ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຂີ້ຄ້ານ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີຫິຣິ ສັດທັງຫຼາຍຜູ້ຜາຣົບຄວາມພຽນ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຜາຣົບຄວາມພຽນ ສັດທັງຫຼາຍຜູ້ມີປັນຍາຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ ຯລຯ (໘)

ສັດທັງຫຼາຍ ຜູ້ບໍ່ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີຫິຣິ ສັດທັງຫຼາຍຜູ້ມີສະຕິຫຼົງລືມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສະຕິຫຼົງລືມ ສັດທັງຫຼາຍຜູ້ມີປັນຍາຊາມຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍຜູ້ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີຫິຣິ ສັດທັງຫຼາຍຜູ້ມີສະຕິໝັ້ນຄົງ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສະຕິໝັ້ນຄົງ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ ຯລຯ (໔)

**ອະຫິຣິກະມູລະກະສູດທີ ໙ ຈົບ**

# ໑໐. ອະໂນດຕັບປະມູລະກະສູດ

## ວ່າດ້ວຍສັດຜູ້ບໍ່ມີໂອດຕັບປະເປັນມູນ

[໑໐໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສັດທັງຫຼາຍຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ສັດທັງຫຼາຍຜູ້ມີສຸຕະໜ້ອຍ

ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຸຕະໜ້ອຍ ສັດທັງຫຼາຍ ຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີໂອດຕັບປະຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີໂອດຕັບປະສັດທັງຫຼາຍຜູ້ມີສຸຕະຫຼາຍ ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີສຸຕະຫຼາຍ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ ໆລໆ (໑)

ສັດທັງຫຼາຍ ຜູ້ບໍ່ມີໂອດຕັບປະຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ບໍ່ມີໂອດຕັບປະ ສັດທັງຫຼາຍຜູ້ຂີ້ຄ້ານຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ຂີ້ຄ້ານສັດທັງຫຼາຍ ຜູ້ມີປັນຍາຊາມຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີໂອດຕັບປະ ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີໂອດຕັບປະ ສັດທັງຫຼາຍຜູ້ຜາຣົບຄວາມພຽນ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຜາຣົບຄວາມພຽນ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ ໆລໆ (໔)

ສັດທັງຫຼາຍ ຜູ້ບໍ່ມີໂອດຕັບປະ ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ບໍ່ມີໂອດຕັບປະ ສັດທັງຫຼາຍຜູ້ມີສະຕິຫຼົງລືມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສະຕິຫຼົງລືມ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີໂອດຕັບປະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີໂອດຕັບປະ ສັດທັງຫຼາຍຜູ້ມີສະຕິໝັ້ນຄົງ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສະຕິໝັ້ນຄົງ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີປັນຍາ ໆລໆ (໓)

**ອະໂນດຕັບປະມູລະກະສູດທີ ໑໐ ຈົບ**

## ໑໑. ອັບປະສຸຕະມູລະກະສູດ

### ວ່າດ້ວຍສັດຜູ້ມີສຸຕະໜ້ອຍເປັນມູນ

[໑໐໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໆລໆ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ໆລໆ

ພິກຂຸທັງຫຼາຍ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີສຸຕະໜ້ອຍ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຸຕະໜ້ອຍ ສັດທັງຫຼາຍຜູ້ຂີ້ຄ້ານຄົບຄ້າ

ສະມາຄົມກັບສັດທັງຫຼາຍ ຜູ້ຂີ້ຄ້ານ ສັດທັງຫຼາຍຜູ້ມີປັນຍາຊາມຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີສຸຕະຫຼາຍ ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີສຸຕະຫຼາຍ ສັດທັງຫຼາຍຜູ້ຜາຣົບຄວາມພຽນ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຜາຣົບຄວາມພຽນ ສັດທັງຫຼາຍຜູ້ມີປັນຍາຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ ຯລຯ (໑)

ສັດທັງຫຼາຍ ຜູ້ມີສຸຕະໜ້ອຍຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີສຸຕະໜ້ອຍ ສັດທັງຫຼາຍຜູ້ມີສະຕິຫຼົງລືມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສະຕິຫຼົງລືມ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ ສັດທັງຫຼາຍ ຜູ້ມີສຸຕະຫຼາຍຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີສຸຕະຫຼາຍ ສັດທັງຫຼາຍຜູ້ມີສະຕິໝັ້ນຄົງ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສະຕິໝັ້ນຄົງ ສັດທັງຫຼາຍຜູ້ມີປັນຍາຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີປັນຍາ ຯລຯ (໔)

**ອັບປະສຸຕະມູລະກະສູດທີ່ ໑໑ ຈົບ**

# ໑໔. ກຸສີຕະມູລະກະສູດ

## ວ່າດ້ວຍສັດຜູ້ຂີ້ຄ້ານເປັນມູນ

[໑໐໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ຂີ້ຄ້ານ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຂີ້ຄ້ານ ສັດທັງຫຼາຍຜູ້ມີສະຕິຫຼົງລືມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສະຕິຫຼົງລືມ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ ສັດທັງຫຼາຍຜູ້ຜາຣົບຄວາມພຽນຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຜາຣົບຄວາມພຽນ

ສັດທັງຫຼາຍ ຜູ້ມີສະຕິໝັ້ນຄົງຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີສະຕິໝັ້ນຄົງ ສັດທັງຫຼາຍຜູ້ມີປັນຍາຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີປັນຍາ ຯລຯ

**ກຸສີຕະມູລະກະສູດທີ່ ໑໔ ຈົບ**

(ສ່ວນທີ່ເປັນອະດີດ ອະນາຄົດ ປັດຈຸບັນໃນທຸກ ໆ ບົດ ເພິ່ງຄະຫຍາຍຄວາມໃຫ້ຄືກັນ)

**ທຸຕິຍະວັກທີ່ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ສັດຕະທາດສູດ
໒. ສະນິທານະສູດ
໓. ຄິນຊະກາວະສະຖະສູດ
໔. ຮີນາທິມຸຕຕິກະສູດ
໕. ຈັງກະມະສູດ
໖. ສະຄາຖາສູດ
໗. ອັດສັດທະສັງສັນທະນະສູດ
໘. ອັດສັດທະມູລະກະສູດ
໙. ອະຫິຣິກະມູລະກະສູດ
໑໐. ອະໂນດຕັບປະມູລະກະສູດ
໑໑. ອັບປະສຸຕະມູລະກະສູດ
໑໒. ກຸສິຕະມູລະກະສູດ

# ໓. ກຳມະປະຖະວັກ

## ໝວດວ່າດ້ວຍກຳມະບົດ

# ໑. ອະສະມາຫິຕະສູດ

## ວ່າດ້ວຍສັດຜູ້ມີຈິດບໍ່ໝັ້ນຄົງ

[໑໐໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ບໍ່ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີສັດທາ ສັດທັງຫຼາຍຜູ້ບໍ່ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີຫິຣິ ສັດທັງຫຼາຍຜູ້ບໍ່ມີ ໂອດຕັບປະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ສັດທັງຫຼາຍຜູ້ມີຈິດບໍ່ໝັ້ນຄົງ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີຈິດບໍ່ໝັ້ນຄົງ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສັດທາ ສັດທັງຫຼາຍຜູ້ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີຫິຣິ ສັດທັງຫຼາຍຜູ້ມີໂອດຕັບປະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີໂອດຕັບປະ ສັດທັງຫຼາຍຜູ້ມີຈິດໝັ້ນຄົງ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີຈິດໝັ້ນຄົງ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ

**ອະສະມາຫິຕະສູດທີ ໑ ຈົບ**

# ໒. ທຸດສີລະສູດ

## ວ່າດ້ວຍສັດຜູ້ທຸສີນ

[໑໐໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ບໍ່ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີສັດທາ ສັດທັງຫຼາຍຜູ້ບໍ່ມີຫິຣິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີຫິຣິ ສັດທັງຫຼາຍຜູ້ບໍ່ມີໂອດຕັບປະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີ

ໂອດຕັບປະ ສັດທັງຫຼາຍຜູ້ທຸສີນ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ທຸສີນ ສັດທັງຫຼາຍຜູ້ມີປັນຍາຊາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາຊາມ

ສັດທັງຫຼາຍ ຜູ້ມີສັດທາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສັດທາ ສັດທັງຫຼາຍຜູ້ມີຫິຣິ ຄົບຄ້າສະມາກັບສັດທັງຫຼາຍຜູ້ມີຫິຣິ ສັດທັງຫຼາຍຜູ້ມີໂອດຕັບປະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີໂອດຕັບປະ ສັດທັງຫຼາຍຜູ້ມີສີນ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສີນ ສັດທັງຫຼາຍຜູ້ມີປັນຍາ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີປັນຍາ

**ທຸດສີລະສູດທີ ໘ ຈົບ**

## ໙. ປັນຈະສິກຂາປະທະສູດ

### ວ່າດ້ວຍສັດຜູ້ມີສີນ ໕

[໑໐໗] ຂ້າພະເຈົ້າໄດ້ສະດັບມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະ ໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ສັດທັງຫຼາຍຄົບຄ້າສະມາຄົມກັນໂດຍທາດແບວດຽວກັນ ຄື ສັດ ທັງຫຼາຍຜູ້ຂ້າສັດ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຂ້າສັດ ສັດທັງຫຼາຍຜູ້ລັກຊັບ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ລັກຊັບ ສັດທັງຫຼາຍຜູ້ປະພຶດຜິດໃນກາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ປະພຶດຜິດໃນກາມ ສັດທັງຫຼາຍຜູ້ເວົ້າຕົວະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວົ້າຕົວະ ສັດທັງຫຼາຍຜູ້ເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ເສບຂອງມຶນເມົາຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດ

ສັດທັງຫຼາຍ ຜູ້ເວັ້ນຂາດຈາກການຂ້າສັດ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວັ້ນຂາດຈາກການຂ້າສັດ ສັດທັງຫຼາຍຜູ້ເວັ້ນຂາດຈາກການລັກຊັບ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວັ້ນຂາດຈາກການລັກຊັບ ສັດທັງຫຼາຍຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າຕົວະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າຕົວະ ສັດທັງຫຼາຍຜູ້ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ຄົບຄ້າສະມາຄົມກັບສັດ

ທັງຫຼາຍ ຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມ ຜະໝາດ

**ປັນຈະສິກຂາປະທະສູດທີ ໓ ຈົບ**

# ໔. ສັດຕະກຳມະປະຖະສູດ

## ວ່າດ້ວຍສັດຜູ້ມີກຳມະບົດ ໆ

[໑໑໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ຂ້າສັດ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຂ້າສັດ ສັດທັງຫຼາຍຜູ້ລັກຊັບ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ລັກຊັບ ສັດທັງຫຼາຍຜູ້ປະພຶດຜິດໃນກາມ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ປະພຶດຜິດໃນກາມ ສັດທັງຫຼາຍຜູ້ເວົ້າຕົວະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວົ້າຕົວະ ສັດທັງຫຼາຍຜູ້ເວົ້າສັບສໍ່ ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ເວົ້າສັບສໍ່ ສັດທັງຫຼາຍຜູ້ເວົ້າຄຳຫຍາບຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວົ້າຄຳຫຍາບ ສັດທັງຫຼາຍຜູ້ເວົ້າບໍ່ມີສາຣະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວົ້າບໍ່ມີສາຣະ

ສັດທັງຫຼາຍ ຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ສັດທັງຫຼາຍຜູ້ເວັ້ນຂາດຈາກການລັກຊັບ ຯລຯ ສັດທັງຫຼາຍຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ຯລຯ ສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າຕົວະ ຯລຯ ສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າສັບສໍ່ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າສັບສໍ່ ສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ ສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ

**ສັດຕະກຳມະປະຖະສູດທີ ໔ ຈົບ**

# ໕. ທະສະກຳມະປະຖະສູດ

## ວ່າດ້ວຍສັດຜູ້ມີກຳມະບົດ ໑໐

[໑໑໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສັດທັງຫຼາຍຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ຂ້າສັດ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ຂ້າສັດ ສັດທັງຫຼາຍຜູ້ລັກຊັບ ຯລຯ ສັດທັງຫຼາຍຜູ້ປະພຶດຜິດໃນກາມ ຯລຯ ສັດທັງຫຼາຍຜູ້ເວົ້າຕົວະ ຯລຯ ສັດທັງຫຼາຍຜູ້ເວົ້າສັບສໍ່ ຯລຯ ສັດທັງຫຼາຍຜູ້ເວົ້າຄຳຫຍາບ ຯລຯ ສັດທັງຫຼາຍຜູ້ເວົ້າບໍ່ມີສາຣະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວົ້າບໍ່ມີສາຣະ ສັດທັງຫຼາຍຜູ້ມີອະພິດຊາ (ຄວາມເພັ່ງເລັງຢາກໄດ້ຂອງຄົນອື່ນ) ຫຼາຍ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີອະພິດຊາຫຼາຍ ສັດທັງຫຼາຍ ຜູ້ມີຈິດພະຍາບາດ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີຈິດພະຍາບາດ ສັດວທັງຫຼາຍຜູ້ມີມິດສາທິດຖິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີມິດສາທິດຖິ

ສັດທັງຫຼາຍ ຜູ້ເວັ້ນຂາດຈາກການຂ້າສັດ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວັ້ນຂາດຈາກການຂ້າສັດ ສັດທັງຫຼາຍຜູ້ເວັ້ນຂາດຈາກການລັກຊັບ ຯລຯ ສັດທັງຫຼາຍຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ຯລຯ ສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າຕົວະ ຯລຯ ສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າສັບສໍ່ ຯລຯ ສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ ຯລຯ ສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ ສັດທັງຫຼາຍຜູ້ບໍ່ມີອະພິດຊາຫຼາຍ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີອະພິດຊາຫຼາຍ ສັດທັງຫຼາຍຜູ້ບໍ່ມີຈິດພະຍາບາດ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ບໍ່ມີຈິດພະຍາບາດ ສັດທັງຫຼາຍຜູ້ມີສຳມາທິດຖິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຳມາທິດຖິ

**ທະສະກຳມະປະຖະສູດທີ ໕ ຈົບ**

# ໖. ອັດຖັງຄິກະສູດ

## ວ່າດ້ວຍສັດຜູ້ປະກອບດ້ວຍອະຣິຍະມັກມີອົງ ໘

[໑໑໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີມິດສາທິດຖິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີມິດສາທິດຖິ ສັດທັງຫຼາຍຜູ້ມີມິດສາສັງກັບປະ ຯລຯ ສັດທັງຫຼາຍຜູ້ມີມິດສາວາຈາ ຯລຯ ສັດທັງຫຼາຍຜູ້ມີມິດສາກຳມັນຕະ ຯລຯ ສັດທັງຫຼາຍຜູ້ມີມິດສາອາຊີວະ ຯລຯ ສັດທັງຫຼາຍຜູ້ມີມິດສາວາຍາມະ ຯລຯ ສັດທັງຫຼາຍຜູ້ມີມິດສາສະຕິ ຯລຯ ສັດທັງຫຼາຍຜູ້ມີມິດສາສະມາທິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີມິດສາສະມາທິ

ສັດທັງຫຼາຍ ຜູ້ມີສຳມາທິດຖິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຳມາທິດຖິ ສັດທັງຫຼາຍຜູ້ມີສຳມາສັງກັບປະ ຯລຯ ສັດທັງຫຼາຍຜູ້ມີສຳມາວາຈາ ຯລຯ ສັດທັງຫຼາຍຜູ້ມີສຳມາກຳມັນຕະ ຯລຯ ສັດທັງຫຼາຍຜູ້ມີສຳມາອາຊີວະ ຯລຯ ສັດທັງຫຼາຍຜູ້ມີສຳມາວາຍາມະ ຯລຯ ສັດທັງຫຼາຍຜູ້ມີສຳມາສະຕິ ຯລຯ ສັດທັງຫຼາຍຜູ້ມີສຳມາສະມາທິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຳມາສະມາທິ

**ອັດຖັງຄິກະສູດທີ ໖ ຈົບ**

# ໗. ທະສັງຄະສູດ

## ວ່າດ້ວຍສັດຜູ້ປະກອບດ້ວຍທຳ ໑໐

[໑໑໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສັດທັງຫຼາຍ ຄົບຄ້າສະມາຄົມກັນໂດຍທາດແນວດຽວກັນ ຄື ສັດທັງຫຼາຍຜູ້ມີມິດສາທິດຖິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີມິດສາທິດຖິ ສັດທັງຫຼາຍ ຜູ້ມີມິດສາສັງກັບປະ ຯລຯ ສັດທັງຫຼາຍຜູ້ມີມິດສາວາຈາ ຯລຯ ສັດທັງຫຼາຍຜູ້ມີມິດສາກຳມັນຕະ ຯລຯ ສັດທັງຫຼາຍຜູ້ມີມິດສາອາຊີວະ ຯລຯ ສັດທັງຫຼາຍຜູ້ມີມິດສາວາຍາມະ ຯລຯ ສັດທັງຫຼາຍຜູ້ມີມິດສາສະຕິ ຯລຯ ສັດທັງຫຼາຍຜູ້ມີມິດສາສະມາທິ ຄົບຄ້າສະມາຄົມກັບສັດທັງຫຼາຍ ຜູ້ມີມິດສາສະມາທິ ສັດທັງຫຼາຍຜູ້ມີມິດສາຍານ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີ ມິດສາຍານ ສັດທັງຫຼາຍຜູ້ມີມິດສາວິມຸດຕິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີ ມິດສາວິມຸດຕິ

ສັດທັງຫຼາຍ ຜູ້ມີສຳມາທິດຖິ ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຳມາທິດຖິ ສັດທັງຫຼາຍຜູ້ມີສຳມາສັງກັບປະ ຯລຯ ສັດທັງຫຼາຍຜູ້ມີສຳມາວາຈາ ຯລຯ ສັດທັງຫຼາຍ ຜູ້ມີສຳມາກຳມັນຕະ ຯລຯ ສັດທັງຫຼາຍຜູ້ມີສຳມາອາຊີວະ ຯລຯ ສັດທັງຫຼາຍຜູ້ມີສຳມາວາຍາມະ ຯລຯ ສັດທັງຫຼາຍຜູ້ມີສຳມາສະຕິ ຯລຯ ສັດທັງຫຼາຍຜູ້ມີສຳມາສະມາທິ ຯລຯ ສັດທັງຫຼາຍຜູ້ມີສຳມາຍານ

ຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຳມາຍານ ສັດທັງຫຼາຍ ຜູ້ມີສຳມາວິມຸດຕິຄົບຄ້າສະມາຄົມກັບສັດທັງຫຼາຍຜູ້ມີສຳມາວິມຸດຕິ

**ທະສັງຄະສູດທີ ໗ ຈົບ**

(ສ່ວນທີ່ເປັນອະດີດ ອະນາຄົດ ປັດຈຸບັນໃນທຸກ ໆ ບົດ ເພິ່ງຄະຫຍາຍໃຫ້ຄືກັນ)

**ລວມພຣະສູດໃນວັກນີ້ ໗ ສູດ ຄື**

໑. ອະສະມາຫິຕະສູດ
໒. ປັນຈະສິກຂາປະທະສູດ
໓. ທະສະກຳມະປະຖະສູດ
໗. ທະສັງຄະສູດ
໔. ທຸສະລີລະສູດ
໕. ສັດຕະກຳມະປະຖະສູດ
໖. ອັດຖັງຄິກະສູດ

**ກຳມະປະຖະວັກທີ ໒ ຈົບ**

# ໔. ຈະຕຸດຖະວັກ

## ໝວດວ່າດ້ວຍທຳມະສູດລະ ໔ ປະການ

# ໑. ຈະຕຸທາດສູດ

## ວ່າດ້ວຍທາດ ໔

[໑໑໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ

ພິກຂຸທັງຫຼາຍ ທາດມີ ໔ ປະການນີ້ ທາດ ໔ ປະການອັນໃດແດ່ ຄື

໑. ປະຖະວີທາດ　　໒. ອາໂປທາດ

໓. ເຕໂຊທາດ　　໔. ວາໂຍທາດ

ພິກຂຸທັງຫຼາຍ ທາດມີ ໔ ປະການນີ້

**ຈະຕຸທາດສູດທີ ໑ ຈົບ**

# ໒. ປຸບເພສຳໂພທະສູດ

## ວ່າດ້ວຍຄວາມດຳຣິກ່ອນຕັດສະຣູ້

[໑໑໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸ ທັງຫຼາຍ ກ່ອນແຕ່ຕັດສະຣູ້ ເມື່ອເຮົາເປັນໂພທິສັດຍັງບໍ່ໄດ້ຕັດສະຣູ້ ໄດ້ມີຄວາມຄິດຄຳນຶງ ຢ່າງນີ້ວ່າ ອັນໃດເປັນຄຸນ ອັນໃດເປັນໂທດຂອງປະຖະວີທາດ ອັນໃດເປັນເຄື່ອງສະບັດອອກຈາກປະຖະວີທາດ

ອັນໃດເປັນຄຸນ ອັນໃດເປັນໂທດຂອງອາໂປທາດ ອັນໃດເປັນເຄື່ອງສະບັດອອກຈາກອາໂປທາດ

ອັນໃດເປັນຄຸນ ອັນໃດເປັນໂທດຂອງເຕໂຊທາດ ອັນໃດເປັນເຄື່ອງສະບັດອອກຈາກເຕໂຊທາດ

ອັນໃດເປັນຄຸນ ອັນໃດເປັນໂທດຂອງວາໂຍທາດ ອັນໃດເປັນເຄື່ອງສະບັດອອກຈາກວາໂຍທາດ

ເຮົານັ້ນໄດ້ມີຄວາມດຳຣິວ່າ ສຸກໂສມະນັດເກີດຂຶ້ນຍ້ອນອາໄສປະຖະວີທາດ ນີ້ເປັນຄຸນຂອງປະຖະວີທາດ

ປະຖະວີທາດເປັນຂອງບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດຂອງປະຖະວີທາດ

ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນປະຖະວີທາດ ນີ້ເປັນເຄື່ອງສະບັດອອກຈາກປະຖະວີທາດ

ສຸກໂສມະນັດເກີດຂຶ້ນຍ້ອນອາໄສອາໂປທາດ ຯລຯ
ສຸກໂສມະນັດເກີດຂຶ້ນຍ້ອນອາໄສເຕໂຊທາດ ຯລຯ
ສຸກໂສມະນັດເກີດຂຶ້ນຍ້ອນອາໄສວາໂຍທາດ ຯລຯ ນີ້ເປັນຄຸນຂອງວາໂຍທາດ

ວາໂຍທາດເປັນຂອງບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດຂອງວາໂຍທາດ

ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນວາໂຍທາດ ນີ້ເປັນເຄື່ອງສະບັດອອກຈາກວາໂຍທາດ

ພິກຂຸທັງຫຼາຍ ຕາບໃດເຮົາຍັງບໍ່ຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກທາດ ໔ ປະການນີ້ ຕາມຄວາມເປັນຈິງ ຕາບນັ້ນ ເຮົາກໍປະຕິຍານບໍ່ໄດ້ວ່າ ເປັນຜູ້ໄດ້ຕັດສະຣູ້ສຳມາສັມໂພທິຍານອັນ ປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມໂລກ ໃນໝູ່ສັດ ພ້ອມທັງສະມະນະພານ ເທວະດາແລະມະນຸດ

ເມື່ອໃດເຮົາຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກທາດ ໔ ປະການນີ້ ຕາມຄວາມເປັນຈິງ ເມື່ອນັ້ນເຮົາຈຶ່ງປະຕິຍານໄດ້ວ່າ ເປັນຜູ້ໄດ້ຕັດສະຣູ້ສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພານ ເທວະດາແລະມະນຸດ

ອັນໜຶ່ງ ຍານແລະທັດສະນະເກີດຂຶ້ນແລ້ວແກ່ເຮົາວ່າ ວິມຸດຕິຂອງເຮົາບໍ່ກຳເຣີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກແລ້ວ

**ປຸບເພສຳໂພທະສູດທີ ໘ ຈົບ**

# ๙. ອະຈະຣິງສູດ

## ວ່າດ້ວຍການທ່ຽວສະແຫວງຫາຄຸນໂທດແລະເຄື່ອງສະບັດອອກຈາກທາດ ໔

[໑໑໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ฯລฯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ฯລฯ

ພິກຂຸທັງຫຼາຍ ເຮົາໄດ້ທ່ຽວສະແຫວງຫາຄຸນຂອງ ປະຖະວີທາດ ໄດ້ພົບຄຸນຂອງປະຖະວີທາດ ໄດ້ເຫັນຄຸນຂອງປະຖະວີທາດທີ່ທີ່ມີຢູ່ດ້ວຍປັນຍາ ເຮົາໄດ້ສະແຫວງຫາໂທດຂອງປະຖະວີທາດ ໄດ້ພົບເຫັນໂທດຂອງປະຖະວີທາດ ໄດ້ເຫັນໂທດຂອງປະຖະວີທາດທີ່ທີ່ມີຢູ່ດ້ວຍປັນຍາ ເຮົາໄດ້ທ່ຽວສະແຫວງຫາ ເຄື່ອງສະບັດອອກຈາກປະຖະວີທາດ ໄດ້ເຫັນພົບເຄື່ອງສະບັດອອກຈາກປະຖະວີທາດ ໄດ້ເຫັນເຄື່ອງສະບັດອອກຈາກປະຖະວີທາດ ທີ່ທີ່ມີຢູ່ດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາຄຸນຂອງ ອາໂປທາດ ฯລฯ

ເຮົາໄດ້ທ່ຽວສະແຫວງຫາຄຸນຂອງ ເຕໂຊທາດ ฯລฯ

ເຮົາໄດ້ທ່ຽວສະແຫວງຫາຄຸນຂອງວາໂຍທາດ ໄດ້ພົບຄຸນຂອງວາໂຍທາດ ໄດ້ເຫັນຄຸນຂອງ ວາໂຍທາດທີ່ທີ່ມີຢູ່ດ້ວຍປັນຍາ ເຮົາໄດ້ທ່ຽວສະແຫວງຫາໂທດຂອງວາໂຍທາດ ໄດ້ພົບໂທດຂອງວາໂຍທາດ ເຮົາໄດ້ທ່ຽວສະແຫວງຫາເຄື່ອງສະບັດອອກຈາກວາໂຍທາດ ໄດ້ເຫັນໂທດຂອງວາໂຍທາດທີ່ທີ່ມີຢູ່ດ້ວຍປັນຍາ ເຮົາໄດ້ພົບເຄື່ອງສະບັດອອກຈາກວາໂຍທາດ ໄດ້ເຫັນເຄື່ອງສະບັດອອກຈາກວາໂຍທາດ ທີ່ທີ່ມີຢູ່ດ້ວຍປັນຍາ

ພິກຂຸທັງຫຼາຍ ຕາບໃດເຮົາຍັງບໍ່ຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກທາດ ໔ ປະການນີ້ ຕາມຄວາມເປັນຈິງ ຕາບນັ້ນ ເຮົາກໍປະຕິຍານບໍ່ໄດ້ວ່າ ເປັນຜູ້ໄດ້ຕັດສະຣູ້ສຳມາສຳໂພທິຍານອັນ ປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ

ເມື່ອໃດເຮົາຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະ ເຄື່ອງສະບັດອອກ ໂດຍຄວາມເປັນເຄື່ອງສະບັດອອກຈາກທາດ ໔ ປະການນີ້ ຕາມຄວາມເປັນຈິງ ເມື່ອນັ້ນເຮົາຈຶ່ງປະຕິຍານໄດ້ວ່າ ເປັນຜູ້ໄດ້ຕັດສະຣູ້ສຳມາສັມໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ

ອັນໜຶ່ງ ຍານແລະທັດສະນະເກີດຂຶ້ນແລ້ວແກ່ເຮົາວ່າ ວິມຸດຕິຂອງເຮົາບໍ່ກຳເຮີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກແລ້ວ

**ອະຈະຣິງສູດທີ ໓ ຈົບ**

# ໔. ໂນເຈທັງສູດ

## ວ່າດ້ວຍຄຸນໂທດແລະເຄື່ອງສະບັດອອກຈາກທາດ ໔

[໑໑໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຯລຯ

ພິກຂຸທັງຫຼາຍ ຖ້າຄຸນຂອງປະຖະວີທາດຈັກບໍ່ໄດ້ມີ ສັດທັງຫຼາຍບໍ່ເພິ່ງຍິນດີໃນປະຖະວີທາດ ແຕ່ຍ້ອນຄຸນຂອງປະຖະວີທາດມີຢູ່ ສັນນັ້ນ ສັດທັງຫຼາຍຈຶ່ງຍິນດີໃນປະຖະວີທາດ

ຖ້າໂທດຂອງປະຖະວີທາດຈັກບໍ່ໄດ້ມີ ສັດທັງຫຼາຍບໍ່ເພິ່ງເບື່ອໜ່າຍໃນປະຖະວີທາດ ແຕ່ຍ້ອນວ່າໂທດຂອງປະຖະວີທາດມີຢູ່ ສະນັ້ນ ສັດທັງຫຼາຍຈຶ່ງເບື່ອໜ່າຍໃນປະຖະວີທາດ

ຖ້າເຄື່ອງສະບັດອອກຈາກປະຖະວີທາດຈັກບໍ່ໄດ້ມີ ສັດທັງຫຼາຍບໍ່ເພິ່ງກຳຈັດຕົນອອກຈາກປະຖະວີທາດໄດ້ ແຕ່ຍ້ອນເຄື່ອງສະບັດອອກຈາກປະຖະວີທາດມີຢູ່ ສະນັ້ນ ສັດທັງຫຼາຍຈຶ່ງກຳຈັດຕົນອອກຈາກປະຖະວີທາດໄດ້

ຖ້າຄຸນຂອງ ອາໂປທາດ ຈັກບໍ່ໄດ້ມີ ຯລຯ

ຖ້າຄຸນຂອງ ເຕໂຊທາດ ຈັກບໍ່ໄດ້ມີ ຯລຯ

ຖ້າຄຸນຂອງ ວາໂຍທາດ ຈັກບໍ່ໄດ້ມີ ສັດທັງຫຼາຍກໍບໍ່ເພິ່ງຍິນດີໃນວາໂຍທາດ ແຕ່ຍ້ອນຄຸນຂອງວາໂຍທາດມີຢູ່ ສະນັ້ນ ສັດທັງຫຼາຍຈຶ່ງຍິນດີໃນວາໂຍທາດ

ຖ້າໂທດຂອງວາໂຍທາດຈັກບໍ່ໄດ້ມີ ສັດທັງຫຼາຍບໍ່ເພິ່ງເບື່ອໜ່າຍໃນວາໂຍທາດ ແຕ່ຍ້ອນໂທດຂອງວາໂຍທາດມີຢູ່ ສະນັ້ນ ສັດທັງຫຼາຍຈຶ່ງເບື່ອໜ່າຍໃນວາໂຍທາດ

ຖ້າເຄື່ອງສະບັດອອກຂອງວາໂຍທາດຈັກບໍ່ໄດ້ມີ ສັດທັງຫຼາຍບໍ່ເພິ່ງກໍາຈັດຕົນອອກຈາກວາໂຍທາດ ແຕ່ຍ້ອນເຄື່ອງສະບັດອອກຈາກວາໂຍທາດມີຢູ່ ສະນັ້ນ ສັດທັງຫຼາຍຈຶ່ງກໍາຈັດຕົນອອກຈາກວາໂຍທາດ

ພິກຂຸທັງຫຼາຍ ຕາບໃດສັດເຫຼົ່ານີ້ຍັງບໍ່ຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດແລະເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກທາດ ໔ ປະການນີ້ ຕາມຄວາມເປັນຈິງ ຕາບນັ້ນສັດເຫຼົ່ານີ້ຍັງກໍາຈັດຕົນອອກບໍ່ໄດ້ ພາກຕົນອອກບໍ່ໄດ້ ຍັງບໍ່ລຸດພົ້ນໄປຈາກໂລກ ພ້ອມທັງເທວະໂລກ ມານໂລກ ພົມໂລກ ຈາກໝູ່ສັດພ້ອມທັງ ສະມະນະພາມ ເທວະດາແລະມະນຸດ ມີໃຈເປັນອິດສະຫລະຢູ່ບໍ່ໄດ້

ເມື່ອໃດສັດເຫຼົ່ານີ້ຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກທາດ ໔ ປະການນີ້ ຕາມຄວາມເປັນຈິງ ເມື່ອນັ້ນສັດເຫຼົ່ານີ້ຍ່ອມກໍາຈັດຕົນອອກໄດ້ ພາກຕົນອອກໄດ້ ລຸດພົ້ນໄປຈາກໂລກພ້ອມທັງເທວະໂລກ ມານໂລກ ພົມໂລກ ຈາກໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ມີໃຈເປັນອິດສະຫລະຢູ່ໄດ້

**ໂນເຈທັງສູດທີ ໔ ຈົບ**

# ໕. ເອກັນຕະທຸກຂະສູດ

## ວ່າດ້ວຍທາດ ໔ ມີທຸກໂດຍສ່ວນດຽວ

[໑໑໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ຖ້າປະຖະວີທາດນີ້ຈັກໄດ້ມີທຸກໂດຍສ່ວນດຽວ ຖືກທຸກຕິດຕາມ ມີທຸກຢັ່ງລົງ ສຸກບໍ່ຢັ່ງລົງ ສັດທັງຫຼາຍ ບໍ່ເພິ່ງຍິນດີໃນປະຖະວີທາດ ແຕ່ຍ້ອນປະຖະວີທາດມີສຸກ ຕິດຕາມ ມີສຸກຢັ່ງລົງ ມີທຸກບໍ່ຢັ່ງລົງ ສະນັ້ນ ສັດທັງຫຼາຍຈຶ່ງຍິນດີໃນປະຖະວີທາດ

ຖ້າອາໂປທາດນີ້ ຯລຯ
ຖ້າເຕໂຊທາດນີ້ ຯລຯ

ຖ້າວາໂຍທາດນີ້ ຈັກໄດ້ມີທຸກໂດຍສ່ວນດຽວ ຖືກທຸກຕິດຕາມ ມີທຸກຢັ່ງລົງ ມີສຸກບໍ່ຢັ່ງລົງ ສັດທັງຫຼາຍ ບໍ່ເພິ່ງຍິນດີໃນວາໂຍທາດ ແຕ່ຍ້ອນວາໂຍທາດມີສຸກຕິດຕາມ ມີສຸກ ຢັ່ງລົງ ມີທຸກບໍ່ຢັ່ງລົງ ສະນັ້ນ ສັດທັງຫຼາຍ ຈຶ່ງຍິນດີໃນວາໂຍທາດ

ພິກຂຸທັງຫຼາຍ ຖ້າປະຖະວີທາດນີ້ຈັກໄດ້ມີສຸກໂດຍສ່ວນດຽວ ມີສຸກຕິດຕາມ ມີສຸກຢັ່ງລົງ ມີທຸກບໍ່ຢັ່ງລົງ ສັດທັງຫຼາຍ ບໍ່ເພິ່ງເບື່ອໜ່າຍໃນປະຖະວີທາດ ແຕ່ຍ້ອນປະຖະວີທາດຖືກທຸກຕິດຕາມ ມີທຸກຢັ່ງລົງ ມີສຸກບໍ່ຢັ່ງລົງ ສະນັ້ນ ສັດທັງຫຼາຍຈຶ່ງເບື່ອໜ່າຍໃນປະຖະວີທາດ

ຖ້າອາໂປທາດນີ້ ຯລຯ

ຖ້າເຕໂຊທາດນີ້ ຯລຯ

ຖ້າວາໂຍທາດນີ້ຈັກໄດ້ມີສຸກໂດຍສ່ວນດຽວ ມີສຸກຕິດຕາມ ມີສຸກຢັ່ງລົງ ມີທຸກບໍ່ຢັ່ງລົງ ສັດທັງຫຼາຍ ບໍ່ເພິ່ງເບື່ອໜ່າຍໃນວາໂຍທາດ ແຕ່ຍ້ອນວາໂຍທາດຖືກທຸກຕິດຕາມ ມີທຸກຢັ່ງລົງ ມີສຸກບໍ່ຢັ່ງລົງ ສະນັ້ນ ສັດທັງຫຼາຍ ຈຶ່ງເບື່ອໜ່າຍໃນວາໂຍທາດ

**ເອກັນຕະທຸກຂະສູດທີ ໕ ຈົບ**

# ໖. ອະພິນັນທະສູດ

## ວ່າດ້ວຍຄວາມຊົມຊື່ນທາດ ໔

[໑໑໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ຜູ້ໃດ ຊົມຊື່ນປະຖະວີທາດ ຜູ້ນັ້ນຊື່ວ່າຊົມຊື່ນທຸກ ຜູ້ໃດຊົມຊື່ນທຸກ ເຮົາກ່າວວ່າ ຜູ້ນັ້ນ ບໍ່ລຸດພົ້ນຈາກທຸກ

ຜູ້ໃດ ຊົມຊື່ນອາໂປທາດ ຯລຯ

ຜູ້ໃດ ຊົມຊື່ນເຕໂຊທາດ ຯລຯ

ຜູ້ໃດ ຊົມຊື່ນວາໂຍທາດ ຜູ້ນັ້ນ ຊື່ວ່າຊົມຊື່ນທຸກ ຜູ້ໃດຊົມຊື່ນທຸກ ເຮົາກ່າວວ່າ ຜູ້ນັ້ນບໍ່ລຸດພົ້ນຈາກທຸກ

ພິກຂຸທັງຫຼາຍ ແຕ່ຜູ້ໃດ ບໍ່ຊົມຊື່ນປະຖະວີທາດ ຜູ້ນັ້ນ ຊື່ວ່າບໍ່ຊົມຊື່ນທຸກ ຜູ້ໃດບໍ່ ຊົມຊື່ນທຸກ ເຮົາກ່າວວ່າ ຜູ້ນັ້ນ ລຸດພົ້ນຈາກທຸກ

ຜູ້ໃດ ບໍ່ຊົມຊື່ນອາໂປທາດ ຯລຯ

ຜູ້ໃດ ບໍ່ຊົມຊື່ນເຕໂຊທາດ ຯລຯ

ຜູ້ໃດ ບໍ່ຊົມຊື່ນວາໂຍທາດ ຜູ້ນັ້ນ ຊື່ວ່າບໍ່ຊົມຊື່ນທຸກ ຜູ້ໃດບໍ່ຊົມຊື່ນທຸກ ເຮົາກ່າວວ່າຜູ້ນັ້ນລຸດພົ້ນຈາກທຸກ

**ອະພິນັນທະສູດທີ ໖ ຈົບ**

# ໗. ອຸບປາທະສູດ

## ວ່າດ້ວຍຄວາມເກີດຂຶ້ນແຫ່ງທາດ ໔ ເປັນທຸກ

[໑໘໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງປະຖະວີທາດ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນທີ່ຕັ້ງແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງອາໂປທາດ ຯລຯ ແຫ່ງເຕໂຊທາດ ຯລຯ ແຫ່ງວາໂຍທາດ ນີ້ ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນທີ່ຕັ້ງແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ພິກຂຸທັງຫຼາຍ ແຕ່ຄວາມດັບ ຄວາມລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງປະຖະວີທາດ ນີ້ເປັນຄວາມດັບແຫ່ງທຸກ ຄວາມລະງັບພະຍາດ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

ຄວາມດັບ ຄວາມລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງອາໂປທາດ ຯລຯ ແຫ່ງເຕໂຊທາດ ຯລຯ ແຫ່ງວາໂຍທາດ ນີ້ເປັນຄວາມດັບແຫ່ງທຸກ ຄວາມລະງັບພະຍາດ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

**ອຸບປາທະສູດທີ ໗ ຈົບ**

# ໗. ສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ

[໑໘໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ທາດ ໔ ປະການນີ້ ທາດ ໔ ປະການ ອັນໃດແດ່ ຄື

໑. ປະຖະວີທາດ ໒. ອາໂປທາດ
໓. ເຕໂຊທາດ ໔. ວາໂຍທາດ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ຄຸນໂທດແລະເຄື່ອງສະບັດອອກຈາກທາດ ໔ ປະການນີ້ ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນ ບໍ່ຈັດວ່າ ເປັນສະມະນະ ໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ແລະ ທ່ານເຫຼົ່ານັ້ນ ກໍບໍ່ເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ຫຼື ປະໂຫຍດຂອງຄວາມເປັນພາມ ດ້ວຍປັນຍາ ອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກທາດ ໔ ປະການນີ້ ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນ ຈັດວ່າເປັນສະມະໜະໃນໝູ່ສະມະນະ ແລະ ຈັດວ່າເປັນພາມໃນໝູ່ພາມ ແລະ ທ່ານເຫຼົ່ານັ້ນກໍເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ແລະ ປະໂຫຍດຂອງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ສະມະນະພາມມະນະສູດທີ ໗ ຈົບ**

# ໘. ທຸຕິຍະສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໒

[໑໘໒] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ທາດ ໔ ປະການນີ້ ທາດ ໔ ປະການ ອັນໃດແດ່ ຄື

໑. ປະຖະວີທາດ ໒. ອາໂປທາດ

໓. ເຕໂຊທາດ ໔. ວາໂຍທາດ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງຄວາມເກີດ ຄວາມຕັ້ງຢູ່ບໍ່ໄດ້ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກທາດ ໔ ປະການນີ້ ຕາມຄວາມເປັນຈິງ ຯລຯ ດ້ວຍປັນຍາ ອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ (ເນື້ອຄວາມໂດຍລະອຽດເພິ່ງທຽບກັບສູດທີ ໗)

**ທຸຕິຍະສະມະນະພາມມະນະສູດທີ ໙ ຈົບ**

# ໑໐. ຕະຕິຍະສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໓

[໑໔໓] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງປະຖະວີທາດ ຄວາມເກີດແຫ່ງປະຖະວີ ຄວາມດັບແຫ່ງປະຖະວີທາດ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງປະຖະວີທາດ

ບໍ່ຮູ້ແຈ້ງອາໂປທາດ ຯລຯ ບໍ່ຮູ້ແຈ້ງເຕໂຊທາດ ຯລຯ ບໍ່ຮູ້ແຈ້ງວາໂຍທາດ ຄວາມເກີດແຫ່ງວາໂຍທາດ ຄວາມດັບແຫ່ງວາໂຍທາດ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວາໂຍທາດ ສະມະນະຫຼືພາມເຫຼົ່ານັ້ນ ບໍ່ຈັດວ່າເປັນສະມະໜະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ແລະທ່ານເຫຼົ່ານັ້ນ ກໍບໍ່ເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ແລະປະໂຫຍດຂອງຄວາມເປັນພາມ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງປະຖະວີທາດ ຄວາມເກີດແຫ່ງປະຖະວີທາດ ຄວາມດັບແຫ່ງປະຖະວີທາດ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງປະຖະວີທາດ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງອາໂປທາດ ຯລຯ
ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງເຕໂຊທາດ ຯລຯ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງວາໂຍທາດ ຄວາມເກີດແຫ່ງວາໂຍທາດ ຄວາມດັບແຫ່ງວາໂຍທາດ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວາໂຍທາດ ສະມະນະຫຼືພາມເຫຼົ່ານັ້ນ ຈັດວ່າເປັນສະມະໜະໃນໝູ່ສະມະນະ ແລະ ຈັດວ່າເປັນພາມໃນໝູ່ພາມ ແລະ ທ່ານເຫຼົ່ານັ້ນກໍ

ເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ແລະ ປະໂຫຍດຂອງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

**ຕະຕິຍະສະມະນະພາມມະນະສູດທີ ໑໐ ຈົບ**

**ຈະຕຸດຖະວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



**ທາດສັງຍຸດ ຈົບບໍລິບູນ**

# ໔. ອະນະມະຕັກຄະສັງຍຸດ

## ໑. ປະຖົມວັກ

### ໝວດທີ ໑

## ໑. ຕິນະກັດຖະສູດ

### ວ່າດ້ວຍຫຍ້າແລະທ່ອນໄມ້

[໑໘໔] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ບ່ອນສຸດເບື້ອງຕົ້ນ ບ່ອນສຸດເບື້ອງປາຍບໍ່ປາກົດແກ່ເຫຼົ່າສັດຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາມັດໄວ້ວົນວຽນ ທ່ອງທ່ຽວໄປ

ປຽບຄື ບຸຣຸດຕັດຫຍ້າ ທ່ອນໄມ້ ງ່າໄມ້ ໃບໄມ້ ໃນຊົມພູທະວີບນີ້ແລ້ວເອົາມາລວມກັນໃຫ້ເປັນກອງດຽວກັນ ເມື່ອລວມກັນແລ້ວ ຈຶ່ງມັດ ມັດລະ ໔ ນິ້ວ ວາງໄວ້ ສົມມຸດວ່ານີ້ເປັນມານດາຂອງເຮົາ ນີ້ເປັນມານດາຂອງມານດາຂອງເຮົາ ມານດາຂອງມານດາແຫ່ງບຸຣຸດນັ້ນ ບໍ່ເພິ່ງສິ້ນສຸດດ້ວຍຈຳນວນຂອງກອງຫຍ້າ ທ່ອນໄມ້ ງ່າໄມ້ ໃບໄມ້ ໃນຊົມພູທະວີບນີ້ເພິ່ງໝົດໄປກ່ອນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ບ່ອນສຸດເບື້ອງຕົ້ນ ບ່ອນສຸດເບື້ອງປາຍ ບໍ່ປາກົດແກ່ເຫຼົ່າສັດຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາມັດໄວ້ ວົນວຽນທ່ອງທ່ຽວໄປ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ທ່ານທັງຫຼາຍສະເຫວີຍຄວາມທຸກ ໄດ້ຮັບຄວາມລຳບາກ ໄດ້ຮັບຄວາມພິນາດຈົນເຕັມປ່າຊ້າເປັນເວລາຍາວນານ

ພິກຂຸທັງຫຼາຍ ຍ້ອນເຫດນີ້ ຈຶ່ງຄວນເບື່ອໜ່າຍ ຄວນຄາຍກຳໜັດ ຄວນເພື່ອລຸດພົ້ນຈາກສັງຂານທັງປວງ

**ຕິນະກັດຖະສູດທີ ໑ ຈົບ**

# ໘. ປະຖະວີສູດ

## ວ່າດ້ວຍແຜ່ນດິນ

[໑໘໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ບ່ອນສຸດເບື້ອງຕົ້ນ ບ່ອນສຸດເບື້ອງປາຍ ບໍ່ປາກົດແກ່ເຫຼົ່າສັດຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາມັດໄວ້ວົນວຽນ ທ່ອງທ່ຽວໄປຢູ່

ປຽບຄື ບຸຣຸດເພິ່ງປັ້ນມະຫາປະຖະພີນີ້ໃຫ້ເປັນກ້ອນ ກ້ອນລະທໍ່ເມັດໝາກກະເບົາແລ້ວວາງໄວ້ ສົມມຸດວ່າ ນີ້ເປັນບິດາຂອງເຮົາ ນີ້ເປັນບິດາຂອງບິດາຂອງເຮົາ ບິດາຂອງບິດາແຫ່ງບຸຣຸດນັ້ນ ບໍ່ເພິ່ງສິ້ນສຸດໄດ້ດ້ວຍການປັ້ນນັ້ນ ແຕ່ມະຫາປະຖະພີນີ້ເພິ່ງໝົດສິ້ນໄປກ່ອນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ບ່ອນສຸດເບື້ອງຕົ້ນ ບ່ອນສຸດເບື້ອງປາຍ ບໍ່ປາກົດແກ່ເຫຼົ່າສັດຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາມັດໄວ້ ວົນວຽນທ່ອງທ່ຽວໄປ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ທ່ານທັງຫຼາຍສະເຫວີຍຄວາມທຸກ ສະເຫວີຍຄວາມລຳບາກ ໄດ້ຮັບຄວາມພິນາດເຕັມປ່າຊ້າເປັນເວລາຍາວນານ

ພິກຂຸທັງຫຼາຍ ຍ້ອນເຫດນີ້ ຈຶ່ງຄວນເບື່ອໜ່າຍ ຄວນຄາຍກຳໜັດ ຄວນເພື່ອລຸດພົ້ນຈາກສັງຂານທັງປວງ

**ປະຖະວີສູດທີ່ ໘ ຈົບ**

# ໙. ອັດສຸສູດ

## ວ່າດ້ວຍນ້ຳຕາ

[໑໘໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ນ້ຳຕາທີ່ຫຼັ່ງໄຫຼຂອງທ່ານທັງຫຼາຍຜູ້ວົນວຽນທ່ອງທ່ຽວໄປ ຮ່ຳໄຮຮ້ອງໄຫ້ຢູ່ ຍ້ອນປະສົບກັບສິ່ງທີ່ບໍ່ພໍໃຈ ຍ້ອນພັດພາກຈາກສິ່ງທີ່ພໍໃຈ ໂດຍການລະນານນີ້ ກັບນ້ຳໃນມະຫາສະມຸດທັງ ໔ ແນວໃດຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍຮູ້ທຳຕາມທີ່ພຣະອົງຊົງສະແດງແລ້ວ ນ້ຳຕາທີ່ຫຼັ່ງໄຫຼຂອງຂ້າພຣະອົງທັງຫຼາຍຜູ້ວົນວຽນທ່ອງທ່ຽວໄປ ຮ່ຳໄຮຮ້ອງໄຫ້ຢູ່ ຍ້ອນປະສົບກັບສິ່ງທີ່ບໍ່ພໍໃຈ ຍ້ອນພັດພາກຈາກສິ່ງທີ່ພໍໃຈ ໂດຍການລະນານນີ້ ນີ້ເອງ ຫຼາຍກວ່າ ສ່ວນນ້ຳໃນມະຫາສະມຸດທັງ ໔ ບໍ່ຫຼາຍເລີຍ

ຖືກແລ້ວ ຖືກແລ້ວ ທ່ານທັງຫຼາຍ ຮູ້ທຳຕາມທີ່ເຮົາສະແດງແລ້ວ ຢ່າງນີ້ ຖືກຕ້ອງແລ້ວ ນ້ຳຕາທີ່ຫຼັ່ງໄຫຼຂອງທ່ານທັງຫຼາຍຜູ້ວົນວຽນທ່ອງທ່ຽວໄປ ຮ່ຳໄຮຮ້ອງໄຫ້ຢູ່ ຍ້ອນປະສົບກັບສິ່ງທີ່ບໍ່ໜ້າພໍໃຈ ຍ້ອນພັດພາກຈາກສິ່ງທີ່ພໍໃຈ ໂດຍການລະນານ ນີ້ເອງ ຫຼາຍກວ່າ ສ່ວນນ້ຳໃນມະຫາສະມຸດທັງ ໔ ບໍ່ຫຼາຍເລີຍ

ທ່ານທັງຫຼາຍ ໄດ້ປະສົບຄວາມຕາຍຂອງມານດາມາດົນນານ ນ້ຳຕາທີ່ຫຼັ່ງໄຫຼຂອງທ່ານທັງຫຼາຍ ຜູ້ປະສົບຄວາມຕາຍຂອງມານດາ ຮ່ຳໄຮຮ້ອງໄຫ້ຢູ່ ຍ້ອນປະສົບກັບສິ່ງທີ່ບໍ່ໜ້າພໍໃຈ ຍ້ອນພັດພາກຈາກສິ່ງທີ່ພໍໃຈນີ້ຫຼາຍກວ່າ ສ່ວນນ້ຳໃນມະຫາສະມຸດ ທັງ ໔ ບໍ່ຫຼາຍເລີຍ

ທ່ານທັງຫຼາຍ ໄດ້ປະສົບຄວາມຕາຍຂອງບິດາ ຯລຯ ຂອງອ້າຍນ້ອງຊາຍ ຯລຯ ຂອງເອື້ອຍນ້ອງສາວ ຯລຯ ຂອງບຸດ ຯລຯ ຂອງທິດາ ຯລຯ ຄວາມເສື່ອມຂອງຍາດ ຯລຯ ຄວາມເສື່ອມແຫ່ງໂພຄະ ຯລຯ ຄວາມເສື່ອມຍ້ອນພະຍາດມາດົນນານ ນ້ຳຕາທີ່ຫຼັ່ງໄຫຼຂອງທ່ານທັງຫຼາຍຜູ້ປະສົບຄວາມເສື່ອມ ຍ້ອນພະຍາດ ຮ່ຳໄຮຮ້ອງໄຫ້ຢູ່ ຍ້ອນປະສົບກັບສິ່ງທີ່ບໍ່ໜ້າພໍໃຈ ຍ້ອນພັດພາກຈາກສິ່ງທີ່ພໍໃຈນີ້ ຫຼາຍກວ່າ ສ່ວນນ້ຳໃນມະຫາສະມຸດທັງ ໔ ບໍ່ຫຼາຍເລີຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ

ພິກຂຸທັງຫຼາຍ ຍ້ອນເຫດນີ້ແລຈຶ່ງຄວນເບື່ອໜ່າຍ ຄວນຄາຍກຳໜັດ ຄວນເພື່ອ ລຸດພົ້ນຈາກສັງຂານທັງປວງ

**ອັດສຸສູດທີ ໓ ຈົບ**

# ໔. ຂີຣະສູດ

## ວ່າດ້ວຍນ້ຳນົມ

[໑໔໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ນ້ຳນົມຂອງມານດາທີ່ທ່ານທັງຫຼາຍຜູ້ວົນວຽນທ່ອງທ່ຽວໄປ ໂດຍການລະນານນີ້ດື່ມແລ້ວ ກັບນ້ຳໃນມະຫາສະມຸດທັງ ໔ ແນວໃດຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍ ຮູ້ທຳຕາມທີ່ພຣະອົງຊົງສະແດງແລ້ວ ນ້ຳນົມຂອງມານດາທີ່ຂ້າພຣະອົງທັງຫຼາຍ ຜູ້ວົນວຽນທ່ອງທ່ຽວໄປໂດຍການລະນານນີ້ ດື່ມແລ້ວນີ້ຫຼາຍກວ່າ ສ່ວນນ້ຳໃນມະຫາສະມຸດທັງ ໔ ບໍ່ຫຼາຍເລີຍ

ຖືກແລ້ວ ຖືກແລ້ວ ທ່ານທັງຫຼາຍ ຮູ້ທຳຕາມທີ່ເຮົາສະແດງແລ້ວ ຢ່າງນີ້ ຖືກຕ້ອງແລ້ວ ນ້ຳນົມຂອງມານດາທີ່ທ່ານທັງຫຼາຍ ຜູ້ວົນວຽນທ່ອງທ່ຽວໄປໂດຍການລະນານນີ້ດື່ມແລ້ວ ນີ້ຫຼາຍກວ່າ ສ່ວນນ້ຳໃນມະຫາສະມຸດທັງ ໔ ບໍ່ຫຼາຍເລີຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ຄວນເພື່ອລຸດພົ້ນ ຯລຯ

**ຂີຣະສູດທີ ໔ ຈົບ**

# ໕. ປັບພະຕະສູດ

## ວ່າດ້ວຍພູ

[໑໔໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຄັ້ງນັ້ນ ພິກຂຸອົງໜຶ່ງ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ກັບໜຶ່ງດົນພຽງໃດນໍ?

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບວ່າ ພິກຂຸ ກັບໜຶ່ງດົນຫຼາຍແທ້ ບໍ່ແມ່ນເລື້ອງງ່າຍທີ່ຈະນັບກັບນັ້ນວ່າ ທໍ່ນີ້ປີ ທໍ່ນີ້ ໑໐໐ ປີ ທໍ່ນີ້ ໑,໐໐໐ ປີ ຫຼື ວ່າທໍ່ນີ້ ໑໐໐,໐໐໐ ປີ”

ພຣະອົງອາດອຸປະມາໄດ້ບໍ່ ຂ້ານ້ອຍ

ອາດອຸປະມາໄດ້ ພິກຂຸ ປຽບຄືພູສິລາແທ່ງທຶບລູກໃຫຍ່ ມີຄວາມຍາວ ໑ ໂຍດ ກວ້າງ ໑ ໂຍດ ສູງ ໑ ໂຍດ ບໍ່ມີປ່ອງ ບໍ່ມີໂພງ ບຸຣຸດເພິ່ງເອົາຜ້າແຄວັນກາສີລູບພູນັ້ນ ໑໐໐ ປີຕໍ່ຄັ້ງ ພູສິລາລູກໃຫຍ່ນັ້ນເພິ່ງໝົດສິ້ນໄປ ຍ້ອນ ຄວາມພະຍາຍາມນີ້ ຍັງໄວກວ່າ ສ່ວນກັບໜຶ່ງຍັງບໍ່ໝົດສິ້ນໄປ ກັບດົນຫຼາຍໜາ ຢ່າງນີ້ ບັນດາກັບທີ່ດົນຫຼາຍໜາ ຢ່າງນີ້ ທ່ານໄດ້ທ່ອງທ່ຽວໄປ ບໍ່ແມ່ນ ໑ ກັບ ບໍ່ແມ່ນ ໑໐໐ ກັບ ບໍ່ແມ່ນ ໑,໐໐໐ ກັບ ບໍ່ແມ່ນ ໑໐໐,໐໐໐ ກັບ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ฯລฯ

ພິກຂຸ ຍ້ອນເຫດນີ້ ຈຶ່ງຄວນເບື່ອໜ່າຍ ຄວນຄາຍກຳໜັດ ຄວນເພື່ອລຸດພົ້ນ ຈາກສັງຂານທັງປວງ

**ປັບພະຕະສູດທີ ໕ ຈົບ**

## ໖. ສາສະປະສູດ

### ວ່າດ້ວຍເມັດຜັກກາດ

[໑໘໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ฯລฯ ເຂດເມືອງສາວັດຖີ ฯລฯ

ຄັ້ງນັ້ນ ພິກຂຸອົງໜຶ່ງໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ฯລฯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ກັບໜຶ່ງດົນພຽງໃດນໍ?

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບວ່າ ພິກຂຸ ກັບໜຶ່ງດົນຫຼາຍໜາ ບໍ່ແມ່ນເລື້ອງງ່າຍທີ່ຈະນັບກັບນັ້ນວ່າ ທໍ່ນີ້ປີ ฯລฯ ຫຼືວ່າທໍ່ນີ້ ໑໐໐,໐໐໐ ປີ”

ພຣະອົງອາດອຸປະມາໄດ້ບໍ່ ຂ້ານ້ອຍ

ອາດອຸປະມາໄດ້ ພິກຂຸ ປຽບຄື ນະຄອນທີ່ສ້າງດ້ວຍເຫລັກມີຄວາມຍາວ ໑ ໂຍດ ກວ້າງ ໑ ໂຍດ ສູງ ໑ ໂຍດ ເຕັມດ້ວຍເມັດຜັກກາດ ລວມກັນເປັນກຸ່ມກ້ອນ ບຸຣຸດເພິ່ງຈັບເມັດຜັກກາດອອກຈາກນະຄອນນັ້ນ ໑໐໐ ປີ ຕໍ່ ໑ ເມັດ ເມັດຜັກກາດກອງໃຫຍ່ນັ້ນ ເພິ່ງໝົດສິ້ນໄປຍ້ອນຄວາມພະຍາຍາມນີ້ຍັງໄວກວ່າ ສ່ວນກັບໜຶ່ງຍັງບໍ່ໝົດສິ້ນໄປ ກັບດົນຫຼາຍແທ້ ຢ່າງນີ້ ບັນດາກັບທີ່ດົນຫຼາຍຢ່າງນີ້ ທ່ານໄດ້ທ່ອງທ່ຽວໄປ ບໍ່ແມ່ນ ໑ ກັບ ບໍ່ແມ່ນ ໑໐໐ ກັບ ບໍ່ແມ່ນ ໑,໐໐໐ ກັບ ບໍ່ແມ່ນ ໑໐໐,໐໐໐ ກັບ ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າສົງສານນີ້ ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ຄວນເພື່ອລຸດພົ້ນຈາກສັງຂານທັງປວງ

**ສາສະປະສູດທີ ໖ ຈົບ**

# ໗. ສາວະກະສູດ
## ວ່າດ້ວຍພຣະສາວົກ

[໑໖໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຄັ້ງນັ້ນ ພິກຂຸຈຳນວນຫຼາຍ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ກັບທັງຫຼາຍທີ່ຜ່ານພົ້ນໄປແລ້ວ ຫຼາຍທໍ່ໃດນໍ?

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບວ່າ ພິກຂຸທັງຫຼາຍ ກັບທັງຫຼາຍທີ່ຜ່ານພົ້ນໄປແລ້ວທໍ່ໃດນັ້ນ ບໍ່ແມ່ນເລື້ອງງ່າຍທີ່ຈະນັບກັບເຫຼົ່ານັ້ນວ່າ ທໍ່ນີ້ກັບ ທໍ່ນີ້ ໑໐໐ ກັບ ທໍ່ນີ້ ໑,໐໐໐ ກັບ ຫຼືວ່າທໍ່ນີ້ ໑໐໐,໐໐໐ ກັບ

ພຣະອົງຈະຊົງອຸປະມາໄດ້ບໍ່? ຂ້ານ້ອຍ

ເຮົາອຸປະມາໄດ້ ພິກຂຸທັງຫຼາຍ ປຽບຄື ສາວົກ ໔ ອົງ ໃນທຳວິໄນນີ້ ມີອາຍຸ ໑໐໐ ປີ ມີຊີວິດຢູ່ ໑໐໐ ປີ ຫາກທ່ານເຫຼົ່ານັ້ນ ເພິ່ງຣະນຶກຍ້ອນຫຼັງກັບໄປໄດ້ ມື້ລະ ໑໐໐,໐໐໐ ກັບ ກັບທີ່ທ່ານເຫຼົ່ານັ້ນ ຣະນຶກໄປບໍ່ເຖິງຍັງມີຢູ່ ຕໍ່ມາສາວົກ ໔ ອົງ ມີອາຍຸ ໑໐໐ ປີ ມີຊີວິດຢູ່ ໑໐໐ ປີ ເພິ່ງມໍຣະນະພາບໄປທຸກ ໑໐໐ ປີ ກັບທີ່ຜ່ານພົ້ນໄປແລ້ວຫຼາຍເຫຼືອຄະນາແນວນີ້ ບໍ່ແມ່ນເລື້ອງງ່າຍທີ່ຈະນັບກັບເຫຼົ່ານັ້ນວ່າ ທໍ່ນີ້ກັບ ທໍ່ນີ້ ໑໐໐ ກັບ ທໍ່ນີ້ ໑,໐໐໐ ກັບ ຫຼືວ່າທໍ່ນີ້ ໑໐໐,໐໐໐ ກັບ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ຄວນເພື່ອລຸດພົ້ນ ຯລຯ

**ສາວະກະສູດທີ ໗ ຈົບ**

# ໘. ຄັງຄາສູດ

## ວ່າດ້ວຍແມ່ນ້ຳຄົງຄາ

[໑໓໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາດຊະຄຶ ຄັ້ງນັ້ນ ພາມຄົນໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ແລ້ວໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະໂຄດົມຜູ້ຈະເລີນ ກັບທັງຫຼາຍທີ່ຜ່ານພົ້ນໄປແລ້ວຫຼາຍທໍ່ໃດນໍ?

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດຕອບວ່າ ພາມ ກັບທັງຫຼາຍທີ່ຜ່ານພົ້ນໄປແລ້ວ ເທົ່າໃດນັ້ນ ບໍ່ແມ່ນເລື້ອງງ່າຍທີ່ຈະນັບກັບເຫຼົ່ານັ້ນວ່າ ທໍ່ນີ້ກັບ ທໍ່ນີ້ ໑໐໐ ກັບ ທໍ່ນີ້ ໑,໐໐໐ ກັບ ຫຼື ວ່າທໍ່ນີ້ ໑໐໐,໐໐໐ ກັບ

ພຣະອົງຈະຊົງອຸປະມາໄດ້ບໍ່? ຂ້ານ້ອຍ

ເຮົາອຸປະມາໄດ້ ພາມ ປຽບຄື ແມ່ນ້ຳຄົງຄານີ້ເລີ່ມຕົ້ນຈາກບ່ອນໃດ ແລະເຖິງມະຫາສະມຸດຢູ່ບ່ອນໃດ ເມັດຊາຍໃນລະຫວ່າງນີ້ງ່າຍທີ່ຈະນັບໄດ້ວ່າ ທໍ່ນີ້ເມັດ ທໍ່ນີ້ ໑໐໐ ເມັດ ທໍ່ນີ້ ໑,໐໐໐ ເມັດ ຫຼື ວ່າທໍ່ນີ້ ໑໐໐,໐໐໐ ເມັດ ກັບທັງຫຼາຍທີ່ຜ່ານພົ້ນໄປແລ້ວຫຼາຍກວ່າເມັດຊາຍເຫຼົ່ານັ້ນ ບໍ່ແມ່ນເລື້ອງງ່າຍທີ່ຈະນັບກັບເຫຼົ່ານັ້ນໄດ້ວ່າ ທໍ່ນີ້ກັບ ທໍ່ນີ້ ໑໐໐ ກັບ ທໍ່ນີ້ ໑,໐໐໐ ກັບ ຫຼື ວ່າທໍ່ນີ້ ໑໐໐,໐໐໐ ກັບ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ບ່ອນສຸດເບື້ອງຕົ້ນ ບ່ອນສຸດເບື້ອງປາຍ ບໍ່ປາກົດແກ່ເຫຼົ່າສັດຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາມັດໄວ້ ວົນວຽນທ່ອງທ່ຽວໄປ ສັດເຫຼົ່ານັ້ນ ກໍສະເຫວີຍຄວາມທຸກ ສະເຫວີຍຄວາມລຳບາກ ໄດ້ຮັບຄວາມພິນາດເຕັມປ່າຊ້າເປັນເວລາຍາວນານ

ພາມ ຍ້ອນເຫດນີ້ ຈຶ່ງຄວນເບື່ອໜ່າຍ ຄວນຄາຍກຳໜັດ ຄວນເພື່ອລຸດພົ້ນຈາກສັງຂານທັງປວງ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ແລ້ວ ພາມຜູ້ນັ້ນ ໄດ້ຂາບທູນວ່າ ທ່ານ ພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມ ຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສິກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ຄັງຄາສູດທີ ໗ ຈົບ**

# ໘. ທັນທະສູດ

## ວ່າດ້ວຍໄມ້ຄ້ອນ

[໑໓໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສົງສານນີ້ມີເບື້ອງຕົ້ນ ແລະ ເບື້ອງປາຍຮູ້ບໍ່ໄດ້ ບ່ອນສຸດເບື້ອງຕົ້ນ ບ່ອນສຸດເບື້ອງປາຍບໍ່ປາກົດແກ່ເຫຼົ່າສັດຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາມັດໄວ້ ວົນວຽນ ທ່ອງທ່ຽວໄປ ຯລຯ

ປຽບຄື ໄມ້ຄ້ອນທີ່ບຸກຄົນໂຍນຂຶ້ນໄປເທິງອາກາດ ບາງເວລາຕົກລົງທາງເຫງົ້າ ບາງເວລາກໍຕົກລົງທາງຂວາງ ບາງເວລາກໍຕົກລົງທາງປາຍ ອຸປະມານີ້ສັນໃດ ອຸປະໄມກໍ ສັນນັ້ນ ສັດທັງຫຼາຍ ຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາມັດໄວ້ ວົນວຽນທ່ອງທ່ຽວໄປ ບາງເວລາຈາກໂລກນີ້ໄປສູ່ໂລກອື່ນ ບາງເວລາກໍຈາກໂລກອື່ນມາສູ່ໂລກນີ້

ຂໍ້ນັ້ນ ຍ້ອນເຫດໃດ

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ຄວນເພື່ອລຸດພົ້ນ ຯລຯ

**ທັນທະສູດທີ ໘ ຈົບ**

# ໑໐. ປຸກຄະລະສູດ

## ວ່າດ້ວຍບຸກຄົນ

[໑໑໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດເມືອງຣາດຊະຄຶ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ສົງສານມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ໂຄງກະດູກ ຮ່າງກະດູກ ກອງກະດູກຂອງບຸກຄົນຄົນໜຶ່ງຜູ້ວົນວຽນທ່ອງທ່ຽວໄປຕະຫຼອດ ໑ ກັບ ຖ້ານຳກະດູກນັ້ນນຳມາກອງລວມກັນໄດ້ ແລະ ກະດູກທີ່ກອງລວມກັນໄວ້ ບໍ່ສູນຫາຍໄປ ເພິ່ງໃຫຍ່ທໍ່ພູເວປຸນລະນີ້

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ຄວນເພື່ອລຸດພົ້ນ ຯລຯ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ເຮົາຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ໄດ້ກ່າວໄວ້ ວ່າ
ກະດູກຂອງບຸກຄົນຄົນໜຶ່ງທີ່ສະສົມໄວ້ ໑ ກັບ
ທີ່ກອງສຸມທໍ່ພູ ກໍພູທີ່ເຮົາກ່າວເຖິງນັ້ນ
ຄື ພູຫລວງຊື່ເວປຸນລະ ຢູ່ທິດເໜືອຂອງພູຄິດຊະກູດ
ເຊິ່ງຕັ້ງອ້ອມຮອບເມືອງຣາຊະຄຶ ແຄວ້ນມະຄົດ
ເມື່ອໃດບຸກຄົນເຫັນອະຣິຍະສັດ ຄື ທຸກ
ເຫດເກີດແຫ່ງທຸກ ຄວາມດັບທຸກ
ແລະ ອະຣິຍະມັກມີອົງ ໘ ອັນຍັງສັດໃຫ້ເຖິງຄວາມດັບທຸກ
ດ້ວຍປັນຍາອັນຖືກຕ້ອງ
ເມື່ອນັ້ນ ເຂົາທ່ອງທ່ຽວໄປ ໗ ຊາດເປັນຢ່າງຫຼາຍ
ກໍຈະເຮັດບ່ອນສຸດທຸກໄດ້ ຍ້ອນສັງໂຍດທັງປວງສິ້ນໄປ

**ປຸກຄະລະສູດທີ ໑໐ ຈົບ**

**ປະຖົມວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ຕິນະກັດຖະສູດ | ໖. ປະຖະວີສູດ |
| ໒. ອັດສຸສູດ | ໗. ຂີຣະສູດ |
| ໓. ປັບພະຕະສູດ | ໘. ສາສະປະສູດ |
| ໔. ສາວະກະສູດ | ໙. ຄັງຄາສູດ |
| ໕. ທັນທະສູດ | ໑໐. ປຸກຄະລະສູດ |

# ໒. ທຸຕິຍະວັກ

## ໝວດທີ ໒

## ໑. ທຸກຄະຕະສູດ

### ວ່າດ້ວຍຜູ້ມີຄວາມທຸກ

[໑໓໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ບ່ອນສຸດເບື້ອງຕົ້ນ ບ່ອນສຸດເບື້ອງປາຍ ບໍ່ປາກົດແກ່ເຫຼົ່າສັດຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາມັດໄວ້ ວົນວຽນທ່ອງທ່ຽວໄປ ທ່ານທັງຫຼາຍ ເຫັນບຸກຄົນຜູ້ມີຄວາມທຸກມີມືແລະຕີນບໍ່ສົມປະກອບ ເພິ່ງສັນນິດຖານບຸກຄົນນີ້ວ່າ ແມ່ນເຮົາທັງຫຼາຍ ກໍເຄີຍສະເຫວີຍຄວາມທຸກແບບນີ້ມາແລ້ວ ໂດຍການລະນານ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ຄວນເພື່ອລຸດພົ້ນ ຯລຯ

**ທຸກຄະຕະສູດທີ ໑ ຈົບ**

# ໘. ສຸຂິຕະສູດ

## ວ່າດ້ວຍຜູ້ມີຄວາມສຸກ

[໑໓໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ທ່ານທັງຫຼາຍເຫັນບຸກຄົນຜູ້ພຽບພ້ອມດ້ວຍຄວາມສຸກ ມີບໍລິວານຖ້າຮັບໃຊ້ ເພິ່ງສັນນິດຖານບຸກຄົນນີ້ວ່າ ແມ່ນເຮົາທັງຫຼາຍກໍເຄີຍສະເຫວີຍຄວາມສຸກແນວນີ້ມາແລ້ວ ໂດຍການລະນານ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ຄວນເພື່ອລຸດພົ້ນ ຯລຯ

**ສຸຂິຕະສູດທີ ໘ ຈົບ**

# ໙. ຕິງສະມັດຕະສູດ

## ວ່າດ້ວຍພິກຂຸ ໓໐ ອົງ

[໑໓໖] ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເວລຸວັນ ຯລຯ ເຂດເມືອງຣາດຊະຄຶ

ຄັ້ງນັ້ນ ພິກຂຸຊາວເມືອງປາວາປະມານ ໓໐ ອົງ ທັງໝົດລ້ວນເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ເປັນຜູ້ຊົງຜ້າໄຕຣຈີວອນເປັນຂໍ້ວັດປະຕິບັດ (ແຕ່) ຍັງມີສັງໂຍດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ໃນຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າຊົງດໍາຣິວ່າ ພິກຂຸຊາວເມືອງປາວາປະມານ ໓໐ ອົງນີ້ ທັງໝົດລ້ວນເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ເປັນຜູ້ຊົງຜ້າໄຕຣຈີວອນເປັນຂໍ້ວັດປະຕິບັດ (ແຕ່) ຍັງມີສັງໂຍດ ທາງທີ່ດີ ເຮົາຄວນສະແດງທໍາໃຫ້ພິກຂຸເຫຼົ່ານີ້ ມີຈິດລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ ຂະນະທີ່ນັ່ງເທິງອາສະນະນີ້ ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍ

ມາດ້ວຍຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ສົງສານນີ້ ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ບ່ອນສຸດເບື້ອງຕົ້ນ ບ່ອນສຸດເບື້ອງປາຍບໍ່ປາກົດແກ່ເຫຼົ່າສັດຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາມັດໄວ້ ວົນວຽນທ່ອງທ່ຽວໄປ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໂລຫິດທີ່ຫຼັ່ງໄຫຼຂອງທ່ານທັງຫຼາຍຜູ້ຖືກຕັດຫົວວົນວຽນທ່ອງທ່ຽວໄປໂດຍການລະນານນີ້ ກັບນ້ຳໃນມະຫາສະມຸດທັງ ໔ ແນວໃດ ຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍຮູ້ທຳຕາມທີ່ພຣະອົງຊົງສະແດງແລ້ວ ໂລຫິດທີ່ຫຼັ່ງໄຫຼຂອງຂ້າພຣະອົງທັງຫຼາຍ ຜູ້ຖືກຕັດຫົວວົນວຽນທ່ອງທ່ຽວໄປໂດຍການລະນານນີ້ ນີ້ຫຼາຍກວ່າ ສ່ວນນ້ຳໃນມະຫາສະມຸດທັງ ໔ ບໍ່ຫຼາຍເລີຍ

ຖືກແລ້ວ ຖືກແລ້ວ ທ່ານທັງຫຼາຍຮູ້ທຳຕາມທີ່ເຮົາສະແດງແນວນີ້ ຖືກຕ້ອງແລ້ວ ໂລຫິດທີ່ຫຼັ່ງໄຫຼຂອງທ່ານທັງຫຼາຍ ຜູ້ຖືກຕັດຫົວວົນວຽນທ່ອງທ່ຽວໄປໂດຍການລະນານນີ້ ນີ້ເອງຫຼາຍກວ່າ ສ່ວນນ້ຳໃນມະຫາສະມຸດທັງ ໔ ບໍ່ຫຼາຍເລີຍ ເມື່ອທ່ານທັງຫຼາຍເກີດເປັນງົວ ເຊິ່ງຖືກຕັດຫົວມາດົນນານ ໂລຫິດທີ່ຫຼັ່ງໄຫຼນີ້ເອງຫຼາຍກວ່າ ສ່ວນນ້ຳໃນມະຫາສະມຸດທັງ ໔ ບໍ່ຫຼາຍເລີຍ ເມື່ອທ່ານທັງຫຼາຍເກີດເປັນຄວາຍ ເຊິ່ງຖືກຕັດຫົວມາດົນນານ ໂລຫິດທີ່ຫຼັ່ງໄຫຼນີ້ເອງຫຼາຍກວ່າ ฯລฯ ເມື່ອທ່ານທັງຫຼາຍເກີດເປັນແກະ ฯລฯ ເກີດເປັນແບ້ ฯລฯ ເກີດເປັນເນື້ອ ฯລฯ ເກີດເປັນໝູ ฯລฯ ເກີດເປັນໄກ່ ฯລฯ

ພິກຂຸທັງຫຼາຍ ເມື່ອທ່ານທັງຫຼາຍ ຖືກຈັບຕັດຫົວດ້ວຍຂໍ້ຫາວ່າເປັນໂຈນຂ້າຊາວບ້ານ ມາດົນນານ ໂລຫິດທີ່ຫຼັ່ງໄຫຼນີ້ເອງຫຼາຍກວ່າ ฯລฯ ຖືກຈັບຕັດຫົວດ້ວຍຂໍ້ຫາວ່າ ເປັນໂຈນປຸ້ນໃນທາງປ່ຽວ ฯລฯ ຖືກຈັບຕັດຫົວດ້ວຍຂໍ້ຫາວ່າ ເປັນໂຈນປະພຶດຜິດໃນພັນລະຍາຂອງຜູ້ອື່ນມາດົນນານ ໂລຫິດທີ່ຫຼັ່ງໄຫຼນີ້ເອງຫຼາຍກວ່າ ສ່ວນນ້ຳໃນມະຫາສະມຸດ ທັງ ໔ ບໍ່ຫຼາຍເລີຍ

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ฯລฯ ຄວນເພື່ອລຸດພົ້ນ ฯລฯ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພຣະພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ເມື່ອພຣະຜູ້ມີພຣະພາກເຈົ້າຕັດໄວຍາກອນພາສິດນີ້ຢູ່ຈິດຂອງພິກຂຸຊາວເມືອງປາວາປະມານ ໓໐ ອົງ ກໍລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ

**ຕິງສະມັດຕະສູດທີ ໓ ຈົບ**

# ໔. ມາຕຸສູດ

## ວ່າດ້ວຍຜູ້ເຄີຍເປັນມານດາ

[໑໖໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສົງສານນີ້ ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ສັດຜູ້ບໍ່ເຄີຍເປັນມານດາໂດຍການລະນານນີ້ ບໍ່ແມ່ນຫາໄດ້ງ່າຍເລີຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ຄວນເພື່ອລຸດພົ້ນ ຯລຯ

**ມາຕຸສູດທີ ໔ ຈົບ**

# ໕. ປິຕຸສູດ

## ວ່າດ້ວຍຜູ້ເຄີຍເປັນບິດາ

[໑໖໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ສັດຜູ້ບໍ່ເຄີຍເປັນບິດາໂດຍການລະນານນີ້ ບໍ່ແມ່ນຫາໄດ້ງ່າຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ຄວນເພື່ອລຸດພົ້ນ ຯລຯ

**ປິຕຸສູດທີ ໕ ຈົບ**

# ໖. ພາຕຸສູດ

## ວ່າດ້ວຍຜູ້ເຄີຍເປັນອ້າຍນ້ອງຊາຍ

[໑໓໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ສັດຜູ້ບໍ່ເຄີຍເປັນອ້າຍນ້ອງຊາຍໂດຍການລະນານນີ້ ບໍ່ແມ່ນຫາໄດ້ງ່າຍ ຯລຯ ຄວນເພື່ອລຸດພົ້ນ ຯລຯ

**ພາຕຸສູດທີ ໖ ຈົບ**

# ໗. ພະຄິນີສູດ

## ວ່າດ້ວຍຜູ້ເຄີຍເປັນເອື້ອຍນ້ອງສາວ

[໑໔໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ສັດຜູ້ບໍ່ເຄີຍເປັນເອື້ອຍນ້ອງສາວໂດຍການລະນານນີ້ ບໍ່ແມ່ນຫາໄດ້ງ່າຍ ຯລຯ ຄວນເພື່ອລຸດພົ້ນ ຯລຯ

**ພະຄິນີສູດທີ ໗ ຈົບ**

# ໘. ປຸດຕະສູດ

## ວ່າດ້ວຍຜູ້ເຄີຍເປັນບຸດ

[໑໔໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ສົງສານນີ້ ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ຯລຯ ສັດຜູ້ບໍ່ເຄີຍເປັນບຸດໂດຍການລະນານນີ້ ບໍ່ແມ່ນຫາໄດ້ງ່າຍ ຯລຯ ຄວນເພື່ອລຸດພົ້ນ ຯລຯ

**ປຸດຕະສູດທີ ໘ ຈົບ**

# ໙. ທິຕຸສູດ

## ວ່າດ້ວຍຜູ້ເຄີຍເປັນທິດາ

[໑໘໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸ ທັງຫຼາຍ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ບ່ອນສຸດເບື້ອງຕົ້ນ ບ່ອນສຸດເບື້ອງປາຍບໍ່ປາກົດ ແກ່ເຫຼົ່າສັດຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາມັດໄວ້ ວົນວຽນທ່ອງທ່ຽວໄປ ສັດຜູ້ບໍ່ເຄີຍເປັນທິດາໂດຍການລະນານນີ້ ບໍ່ແມ່ນຫາໄດ້ງ່າຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວ່າ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ບ່ອນສຸດເບື້ອງຕົ້ນ ບ່ອນສຸດເບື້ອງປາຍ ບໍ່ປາກົດແກ່ເຫຼົ່າສັດຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາມັດໄວ້ ວົນວຽນທ່ອງທ່ຽວໄປ ທ່ານທັງຫຼາຍ ໄດ້ສະເຫວີຍຄວາມທຸກ ສະເຫວີຍຄວາມລຳບາກ ໄດ້ຮັບຄວາມພິນາດ ເຕັມປ່າຊ້າ ເປັນເວລາຍາວນານ

ພິກຂຸທັງຫຼາຍ ຍ້ອນເຫດນີ້ເອງ ຈຶ່ງຄວນເບື່ອໜ່າຍ ຄວນຄາຍກຳໜັດ ຄວນເພື່ອລຸດພົ້ນຈາກສັງຂານທັງປວງ

**ທິຕຸສູດທີ ໙ ຈົບ**

# ໑໐. ເວປຸນລະປັບພະຕະສູດ

## ວ່າດ້ວຍພູເວປຸນລະ

[໑໘໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດເມືອງ ຣາຊະຄຶ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍ ມາດ້ວຍຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ສົງສານນີ້ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ ບ່ອນສຸດເບື້ອງຕົ້ນ ບ່ອນສຸດເບື້ອງປາຍ ບໍ່ປາກົດແກ່ເຫຼົ່າສັດຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາມັດໄວ້ ວົນວຽນ ທ່ອງທ່ຽວໄປຢູ່

ເລື້ອງເຄີຍມີມາແລ້ວ ພູເວປຸນລະນີ້ໄດ້ຊື່ວ່າ ປາຈີນວັງສະ ສະໄໝນັ້ນໝູ່ມະນຸດ ໄດ້ຊື່ວ່າເຜົ່າຕິວະຣາ ມະນຸດເຜົ່າຕິວະຣາມີອາຍຸປະມານ ໔ ໝື່ນປີ ມະນຸດເຜົ່າຕິວະຣາ ຂຶ້ນພູປາຈີນວັງສະໃຊ້ເວລາ ໔ ມື້ ລົງກໍໃຊ້ເວລາ ໔ ມື້ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ອະຣະຫັນຕະສໍາມາສໍາພຸດທະເຈົ້າ ພຣະນາມວ່າ ກະກຸສັນທະ ສະເດັດອຸບັດຂຶ້ນໃນໂລກ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະນາມວ່າ ກະກຸສັນທະ ມີພຣະສາວົກຄູ່ໜຶ່ງເປັນຄູ່ເລີດ ຄູ່ຈະເລີນ ຊື່ວ່າ ວິທູຣະ ແລະ ສັນຊີວະ

ທ່ານທັງຫຼາຍ ຈົ່ງເບິ່ງເທີ້ນ ຊື່ພູລູກນີ້ຫາຍໄປແລ້ວ ມະນຸດເຫຼົ່ານັ້ນກໍຕາຍໄປແລ້ວ ແລະພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ກໍປະຣິນິບພານໄປແລ້ວ

ພິກຂຸທັງຫຼາຍ ສັງຂານທັງຫຼາຍບໍ່ທ່ຽງ ແນວນີ້ ບໍ່ໝັ້ນຍືນ ແນວນີ້ ບໍ່ໜ້າຊື່ນໃຈ ແນວນີ້ ຍ້ອນເຫດນີ້ ຈຶ່ງຄວນເບື່ອໜ່າຍ ຄວນຄາຍກໍາໜັດ ຄວນເພື່ອລຸດພົ້ນຈາກ ສັງຂານທັງປວງ

ເລື້ອງເຄີຍມີມາແລ້ວ ພູເວປຸນລະນີ້ໄດ້ຊື່ວ່າ ວົງກົດ ສະໄໝນັ້ນ ໝູ່ມະນຸດໄດ້ຊື່ວ່າ ເຜົ່າໂຣຫິສັດສະ ມະນຸດເຜົ່າໂຣຫິສັດສະມີອາຍຸປະມານ ໓ ໝື່ນປີ ມະນຸດເຜົ່າໂຣຫິສັດສະ ຂຶ້ນພູວົງກົດໃຊ້ເວລາ ໓ ມື້ ລົງກໍໃຊ້ເວລາ ໓ ມື້ ສະໄໝນັ້ນ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະນາມວ່າ ໂກນາຄະມະນະ ສະເດັດອຸບັດຂຶ້ນໃນໂລກ ພຣະຜູ້ມີພຣະພາກອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະນາມວ່າ ໂກນາຄະມະນະ ມີພຣະສາວົກຄູ່ໜຶ່ງເປັນຄູ່ເລີດ ຄູ່ຈະເລີນ ຊື່ວ່າ ພິຍໂຍສະ ແລະອຸດຕະຣະ

ທ່ານທັງຫຼາຍຈົ່ງເບິ່ງເທີ້ນ ຊື່ພູລູກນີ້ ຫາຍໄປແລ້ວ ມະນຸດເຫຼົ່ານັ້ນກໍຕາຍໄປແລ້ວ ແລະພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ກໍປະຣິນິບພານໄປແລ້ວ

ພິກຂຸທັງຫຼາຍ ສັງຂານທັງຫຼາຍບໍ່ທ່ຽງ ຢ່າງນີ້ ຯລຯ ຄວນເພື່ອລຸດພົ້ນ ຯລຯ

ເລື້ອງເຄີຍມີມາແລ້ວ ພູເວປຸນລະນີ້ໄດ້ຊື່ວ່າສຸປັດສະ ສະໄໝນັ້ນ ໝູ່ມະນຸດໄດ້ຊື່ວ່າເຜົ່າສຸບປິຍາ ມະນຸດເຜົ່າສຸບປິຍາມີອາຍຸປະມານ ໒ ໝື່ນປີ ມະນຸດເຜົ່າສຸບປິຍາຂຶ້ນ ພູສຸປັດສະໃຊ້ເວລາ ໒ ມື້ ລົງກໍໃຊ້ເວລາ ໒ ມື້ ສະໄໝນັ້ນ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະນາມວ່າ ກັດສະປະ ສະເດັດອຸບັດຂຶ້ນໃນໂລກ ພຣະຜູ້ມີພຣະພາກ ອະຣະຫັນ

ຕະສຳມາສຳພຸດທະເຈົ້າ ພຣະນາມວ່າ ກັດສະປະ ມີພຣະສາວົກຄູ່ໜຶ່ງເປັນຄູ່ເລີດ ຄູ່ຈະເລີນ ຊື່ວ່າ ຕິດສະແລະພາຣະທະວາຊະ

ທ່ານທັງຫຼາຍ ຈົ່ງເບິ່ງເທີ້ນ ຊື່ພູລູກນີ້ຫາຍໄປແລ້ວ ມະນຸດເຫຼົ່ານັ້ນ ກໍຕາຍໄປແລ້ວ ແລະພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ກໍປະຣິນິບພານໄປແລ້ວ

ພິກຂຸທັງຫຼາຍ ສັງຂານທັງຫຼາຍບໍ່ທ່ຽງຢ່າງນີ້ ບໍ່ໝັ້ນຍືນຢ່າງນີ້ ຯລຯ ຄວນເພື່ອ ລຸດພົ້ນ ຯລຯ

ແຕ່ໃນບັດນີ້ ພູເວປຸນລະນີ້ໄດ້ຊື່ວ່າ ເວປຸນລະຄືເກົ່າ ກໍບັດນີ້ ໝູ່ມະນຸດເຫຼົ່ານີ້ໄດ້ຊື່ວ່າ ເຜົ່າມາຄະທະ ມະນຸດເຜົ່າມາຄະທະມີອາຍຸໜ້ອຍ ຜູ້ໃດມີຊີວິດຢູ່ໄດ້ດົນ ຜູ້ນັ້ນມີອາຍຸພຽງ ໑໐໐ ປີເປັນເກນ ຈະຕ່ຳກວ່າຫຼືເກີນກວ່າກໍມີ ມະນຸດເຜົ່າມາຄະທະ ຂຶ້ນພູເວປຸນລະພຽງບຶດດຽວ ລົງກໍພຽງບຶດດຽວ ແລະບັດນີ້ເຮົາເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າອຸບັດຂຶ້ນໃນໂລກ ເຮົາມີສາວົກຄູ່ໜຶ່ງເປັນຄູ່ເລີດ ຄູ່ຈະເລີນ ຊື່ວ່າ ສາຣີບຸດ ແລະ ໂມກຄັນລານະ

ສະໄໝຕໍ່ໄປ ພູນີ້ຈັກຫາຍໄປ ມະນຸດເຫຼົ່ານີ້ກໍຈັກຕາຍ ແລະ ເຮົາກໍຈັກປະຣິນິບພານ

ພິກຂຸທັງຫຼາຍ ສັງຂານທັງຫຼາຍບໍ່ທ່ຽງແນວນີ້ ບໍ່ໝັ້ນຍືນແນວນີ້ ບໍ່ໜ້າຍິນດີແນວນີ້ ຍ້ອນເຫດນີ້ ຈຶ່ງຄວນເບື່ອໜ່າຍ ຄວນຄາຍກຳໜັດ ຄວນເພື່ອລຸດພົ້ນຈາກສັງຂານທັງປວງ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປ ວ່າ

ພູປາຈີນວັງສະຂອງໝູ່ມະນຸດເຜົ່າຕິວະຣາ
ພູວົງກົດຂອງໝູ່ມະນຸດເຜົ່າໂຣຫິສັດສະ
ພູສຸປັດສະຂອງໝູ່ມະນຸດເຜົ່າສຸບປິຍາ
ແລະພູເວປຸນລະຂອງໝູ່ມະນຸດເຜົ່າມາຄະທະ

ສັງຂານທັງຫຼາຍບໍ່ທ່ຽງນໍ?
ມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາ
ເກີດຂຶ້ນແລ້ວຍ່ອມດັບໄປ
ຄວາມເຂົ້າໄປສະງົບລະງັບສັງຂານເຫຼົ່ານັ້ນເປັນຄວາມສຸກ

**ເວປຸນລະປັບພະຕະສູດທີ ໑໐ ຈົບ**

**ທຸຕິຍະວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ທຸກຄະຕະສູດ
໒. ຕິງສະມັດຕະສູດ
໓. ປິຕຸສູດ
໔. ພະຄິນີສູດ
໕. ທີຕຸສູດ
໖. ສຸຂິຕະສູດ
໗. ມາຕຸສູດ
໘. ພາຕຸສູດ
໙. ປຸດຕະສູດ
໑໐. ເວປຸນລະປັບພະຕະສູດ

**ອະນະມະຕັກຄະສັງຍຸດ ຈົບບໍລິບູນ**

# ໕. ກັດສະປະສັງຍຸດ

## ໑. ສັນຕຸດຖະສູດ

### ວ່າດ້ວຍຄວາມສັນໂດດ

[໑໘໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ກັດສະປະນີ້ ເປັນຜູ້ສັນໂດດດ້ວຍຈີວອນຕາມມີຕາມໄດ້ ແລະກ່າວສັນເສີນຄວາມສັນໂດດດ້ວຍຈີວອນຕາມມີຕາມໄດ້ ແລະບໍ່ປະກອບໃນການສະແຫວງຫາໃນທາງທີ່ຜິດທີ່ບໍ່ສົມຄວນ ຍ້ອນເຫດແຫ່ງຈີວອນ ບໍ່ໄດ້ຈີວອນກໍບໍ່ກະວົນກະວາຍ ແລະໄດ້ຈີວອນແລ້ວກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ແນມເຫັນໂທດ ມີປັນຍາເຄື່ອງສະບັດອອກ ໃຊ້ສອຍຢູ່

ກັດສະປະນີ້ ເປັນຜູ້ສັນໂດດດ້ວຍບິນທະບາດຕາມມີຕາມໄດ້ ແລະ ກ່າວສັນເສີນຄວາມສັນໂດດດ້ວຍບິນທະບາດຕາມມີຕາມໄດ້ ແລະບໍ່ປະກອບໃນການສະແຫວງຫາໃນທາງທີ່ຜິດທີ່ບໍ່ສົມຄວນ ຍ້ອນເຫດແຫ່ງບິນທະບາດ ບໍ່ໄດ້ບິນທະບາດກໍບໍ່ກະວົນກະວາຍ ແລະ ໄດ້ບິນທະບາດແລ້ວ ກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ແນມເຫັນໂທດ ມີປັນຍາເຄື່ອງສະບັດອອກ ບໍຣິໂພກຢູ່

ກັດສະປະນີ້ເປັນຜູ້ສັນໂດດດ້ວຍເສນາສະນະຕາມມີຕາມໄດ້ ແລະ ກ່າວສັນເສີນຄວາມສັນໂດດດ້ວຍເສນາສະນະຕາມມີຕາມໄດ້ ແລະບໍ່ປະກອບໃນການສະແຫວງຫາໃນທາງທີ່ຜິດທີ່ບໍ່ສົມຄວນ ຍ້ອນເຫດແຫ່ງເສນາສະນະ ບໍ່ໄດ້ເສນາສະນະກໍບໍ່ກະວົນກະວາຍ ແລະໄດ້ເສນາສະນະແລ້ວກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ແນມເຫັນໂທດ ມີປັນຍາເຄື່ອງສະບັດອອກ ໃຊ້ສອຍຢູ່

ກັດສະປະນີ້ເປັນຜູ້ສັນໂດດດ້ວຍຄິລານະປັດໄຈ ເພສັດບໍຣິຂານຕາມມີຕາມໄດ້ ແລະກ່າວສັນເສີນຄວາມສັນໂດດດ້ວຍຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ ທັງບໍ່ປະກອບການສະແຫວງຫາຜິດທີ່ບໍ່ສົມຄວນ ຍ້ອນເຫດແຫ່ງຄິລານະປັດໄຈເພສັດບໍຣິຂານ ບໍ່ໄດ້ຄິລານະປັດໄຈເພສັດບໍຣິຂານກໍບໍ່ກະວົນກະວາຍ ແລະ ໄດ້ຄິລານະປັດໄຈເພສັດບໍຣິຂານແລ້ວກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ແນມເຫັນໂທດ ມີປັນຍາເຄື່ອງສະບັດອອກ ບໍຣິໂພກຢູ່

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍຈັກເປັນຜູ້ສັນໂດດດ້ວຍຈີວອນຕາມມີຕາມໄດ້ ແລະ ກ່າວສັນເສີນຄວາມສັນໂດດດ້ວຍຈີວອນຕາມມີ ຕາມໄດ້ ແລະ ບໍ່ປະກອບໃນການສະແຫວງຫາໃນທາງທີ່ຜິດທີ່ບໍ່ສົມຄວນ ຍ້ອນເຫດແຫ່ງຈີວອນ

ເມື່ອບໍ່ໄດ້ຈີວອນກໍບໍ່ກະວົນກະວາຍ ແລະ ໄດ້ຈີວອນແລ້ວກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ແນມເຫັນໂທດ ມີປັນຍາ ເຄື່ອງສະບັດອອກ ໃຊ້ສອຍຢູ່

**(ເພິ່ງເຮັດແນວນີ້ໃນທຸກາບົດ)**

ເຮົາທັງຫຼາຍ ຈັກເປັນຜູ້ສັນໂດດດ້ວຍບິນທະບາດຕາມມີຕາມໄດ້ ຯລຯ ຈັກເປັນຜູ້ສັນໂດດ ດ້ວຍເສນາສະນະຕາມມີຕາມໄດ້ ຯລຯ ຈັກເປັນຜູ້ສັນໂດດດ້ວຍຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ ແລະ ກ່າວສັນເສີນຄວາມສັນໂດດດ້ວຍຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ ທັງບໍ່ປະກອບການສະແຫວງຫາຜິດທີ່ບໍ່ສົມຄວນ ຍ້ອນເຫດແຫ່ງຄິລານະປັດໄຈເພສັດບໍຣິຂານ ບໍ່ໄດ້ຄິລານະປັດໄຈເພສັດບໍຣິຂານກໍບໍ່ກະວົນກະວາຍ ແລະ ໄດ້ຄິລານະປັດໄຈເພສັດບໍຣິຂານແລ້ວກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ແນມເຫັນໂທດ ມີປັນຍາເຄື່ອງສະບັດອອກ ຈັກບໍຣິໂພກ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້ ເຮົາຈັກກ່າວສອນທ່ານທັງຫຼາຍຕາມກັດສະປະ ຫຼື ຜູ້ໃດເພິ່ງເປັນຜູ້ຄືກັດສະປະ ເຮົາຈັກກ່າວສອນໃຫ້ປະພຶດຕາມຜູ້ນັ້ນ ແລະທ່ານທັງຫຼາຍຜູ້ໄດ້ຮັບໂອວາດແລ້ວ ເພິ່ງປະຕິບັດເພື່ອຄວາມເປັນເຊັ່ນນັ້ນ

**ສັນຕຸດຖະສູດທີ ໑ ຈົບ**

# ໘. ອະໂນດຕັບປີສູດ

## ວ່າດ້ວຍຄວາມບໍ່ສະດຸ້ງຢ້ານ

[໑໔໕] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ທ່ານພຣະມະຫາກັດສະປະ ແລະ ທ່ານພຣະສາຣີບຸດຢູ່ໃນປ່າອິສິປະຕະນະມະຣິຄະທາຍະວັນ ເຂດເມືອງພາຣານະສີ ຄັ້ງນັ້ນ ທ່ານພຣະສາຣີບຸດອອກຈາກທີ່ຫຼີກຫຼີກໃນເວລາຄ່ຳ ເຂົ້າໄປຫາທ່ານພຣະມະຫາກັດສະປະຮອດບ່ອນຢູ່ແລ້ວ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລະກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລຳດັບນັ້ນ ທ່ານພຣະສາຣີບຸດໄດ້ກ່າວ ວ່າ

ທ່ານກັດສະປະ ຜົມກ່າວວ່າ ພິກຂຸຜູ້ບໍ່ມີຄວາມພຽນເຄື່ອງເຜົາກິເລດ ບໍ່ມີຄວາມສະດຸ້ງຢ້ານ ເປັນຜູ້ບໍ່ຄວນເພື່ອຕັດສະຣູ້ ເພື່ອນິບພານ ເພື່ອບັນລຸທຳອັນກະເສມຈາກໂຍຄະຢ່າງຍອດຢ້ຽມ ສ່ວນພິກຂຸຜູ້ມີຄວາມພຽນເຄື່ອງເຜົາກິເລດ ມີຄວາມສະດຸ້ງຢ້ານ ເປັນຜູ້ຄວນເພື່ອຕັດສະຣູ້ ເພື່ອນິບພານ ເພື່ອບັນລຸທຳອັນກະເສມຈາກໂຍຄະຢ່າງຍອດຢ້ຽມ

ທ່ານພຣະມະຫາກັດສະປະຖາມວ່າ ທ່ານຜູ້ມີອາຍຸ ພິກຂຸຊື່ວ່າ ເປັນຜູ້ບໍ່ມີຄວາມພຽນເຄື່ອງເຜົາກິເລດ ບໍ່ມີຄວາມສະດຸ້ງຢ້ານ ເປັນຜູ້ບໍ່ຄວນເພື່ອຕັດສະຣູ້ ບໍ່ຄວນເພື່ອນິບພານ ບໍ່ຄວນເພື່ອບັນລຸທຳອັນກະເສມຈາກໂຍຄະຢ່າງຍອດຢ້ຽມ ດ້ວຍເຫດທີ່ໃດ ແລະພິກຂຸຊື່ວ່າ ເປັນຜູ້ມີຄວາມພຽນເຄື່ອງເຜົາກິເລດ ມີຄວາມສະດຸ້ງຢ້ານ ເປັນຜູ້ຄວນເພື່ອຕັດສະຣູ້ ເພື່ອນິບພານ ເພື່ອບັນລຸທຳອັນກະເສມຈາກໂຍຄະຢ່າງຍອດຢ້ຽມ ດ້ວຍເຫດທີ່ໃດ?

ທ່ານຜູ້ມີອາຍຸ ພິກຂຸໃນພຣະທຳວິໄນນີ້ ບໍ່ທຳຄວາມພຽນເຄື່ອງເຜົາກິເລດ ໂດຍຄິດວ່າ ບາບອະກຸສົນທຳທີ່ຍັງບໍ່ເກີດຂຶ້ນ ເມື່ອເກີດຂຶ້ນແກ່ເຮົາ ເພິ່ງເປັນໄປເພື່ອຄວາມພິນາດ ບໍ່ເຮັດຄວາມພຽນເຄື່ອງເຜົາກິເລດ ໂດຍຄິດວ່າ ບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ເມື່ອເຮົາຍັງລະບໍ່ໄດ້ ເພິ່ງເປັນໄປເພື່ອຄວາມພິນາດ ບໍ່ທຳຄວາມພຽນເຄື່ອງເຜົາກິເລດ ໂດຍຄິດວ່າ ກຸສົນທຳທີ່ຍັງບໍ່ເກີດຂຶ້ນ ເມື່ອບໍ່ເກີດຂຶ້ນແກ່ເຮົາ ເພິ່ງເປັນໄປເພື່ອຄວາມພິນາດ ບໍ່ທຳຄວາມພຽນເຄື່ອງເຜົາກິເລດ ໂດຍຄິດວ່າ ກຸສົນທຳທີ່ເກີດຂຶ້ນແລ້ວແກ່ເຮົາ ເມື່ອດັບ ເພິ່ງເປັນໄປເພື່ອຄວາມພິນາດ

ພິກຂຸຊື່ວ່າ ເປັນຜູ້ບໍ່ມີຄວາມພຽນເຄື່ອງເຜົາກິເລດ ເປັນແນວນີ້

ພິກຂຸຊື່ວ່າ ບໍ່ມີຄວາມສະດຸ້ງຢ້ານ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ບໍ່ສະດຸ້ງຢ້ານ ໂດຍຄິດວ່າ ບາບອະກຸສົນທຳທີ່ຍັງບໍ່ເກີດຂຶ້ນແກ່ແຮາ ເມື່ອເກີດຂຶ້ນ ເພິ່ງເປັນໄປເພື່ອຄວາມພິນາດ ບໍ່ສະດຸ້ງຢ້ານ ໂດຍຄິດວ່າ ບາບອະກຸສົນທຳທີ່ເກີດຂຶ້ນແລ້ວແກ່ເຮົາ ເມື່ອເຮົາຍັງລະບໍ່ໄດ້ ເພິ່ງເປັນໄປເພື່ອຄວາມພິນາດ ບໍ່ສະດຸ້ງຢ້ານ ໂດຍຄິດວ່າ ກຸສົນທຳທີ່ຍັງບໍ່ເກີດຂຶ້ນແກ່ເຮົາ ເມື່ອບໍ່ເກີດຂຶ້ນ ເພິ່ງເປັນໄປ ເພື່ອຄວາມພິນາດ ບໍ່ສະດຸ້ງຢ້ານ ໂດຍຄິດວ່າ ກຸສົນທຳທີ່ເກີດຂຶ້ນແກ່ເຮົາ ເມື່ອດັບ ເພິ່ງເປັນໄປເພື່ອຄວາມພິນາດ

ພິກຂຸຊື່ວ່າ ບໍ່ມີຄວາມສະດຸ້ງຢ້ານ ເປັນແນວນີ້

ພິກຂຸເປັນຜູ້ບໍ່ມີຄວາມພຽນເຄື່ອງເຜົາກິເລດ ບໍ່ມີຄວາມສະດຸ້ງຢ້ານ ເປັນຜູ້ບໍ່ຄວນເພື່ອຕັດສະຣູ້ ບໍ່ຄວນເພື່ອນິບພານ ບໍ່ຄວນເພື່ອບັນລຸທຳອັນກະເສມຈາກໂຍຄະອັນປະເສີດ ເປັນແນວນີ້ແລ

ພິກຂຸຊື່ວ່າ ເປັນຜູ້ມີຄວາມພຽນເຄື່ອງເຜົາກິເລດ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ທຳຄວາມພຽນເຄື່ອງເຜົາກິເລດ ໂດຍຄິດວ່າ ບາບອະກຸສົນທຳທີ່ຍັງບໍ່ເກີດຂຶ້ນແກ່ເຮົາ ເມື່ອເກີດຂຶ້ນ ເພິ່ງເປັນໄປເພື່ອຄວາມພິນາດ ທຳຄວາມພຽນເຄື່ອງເຜົາກິເລດ ໂດຍຄິດວ່າ ບາບອະກຸສົນທຳທີ່ເກີດຂຶ້ນແລ້ວແກ່ເຮົາ ເມື່ອຍັງລະບໍ່ໄດ້ ເພິ່ງເປັນໄປເພື່ອຄວາມພິນາດ ທຳຄວາມພຽນເຄື່ອງເຜົາກິເລດໂດຍຄິດວ່າ ກຸສົນທຳທີ່ຍັງບໍ່ເກີດຂຶ້ນແກ່ເຮົາ ເມື່ອ

ບໍ່ເກີດຂຶ້ນ ເພິ່ງເປັນໄປເພື່ອຄວາມພິນາດ ທຳຄວາມພຽນເຄື່ອງເຜົາກິເລດ ໂດຍຄິດວ່າ ກຸສົນທຳທີ່ເກີດຂຶ້ນແກ່ເຮົາ ເມື່ອດັບ ເພິ່ງເປັນໄປເພື່ອຄວາມພິນາດ

ພິກຂຸຊື່ວ່າ ເປັນຜູ້ມີຄວາມພຽນເຄື່ອງເຜົາກິເລດ ເປັນແນວນີ້

ພິກຂຸຊື່ວ່າ ມີຄວາມສະດຸ້ງຢ້ານ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ຍ່ອມສະດຸ້ງຢ້ານ ໂດຍຄິດວ່າ ບາບອະກຸສົນທຳທີ່ຍັງບໍ່ເກີດຂຶ້ນແກ່ເຮົາ ເມື່ອເກີດຂຶ້ນ ເພິ່ງເປັນໄປເພື່ອຄວາມພິນາດ ຍ່ອມສະດຸ້ງຢ້ານ ໂດຍຄິດວ່າ ບາບອະກຸສົນທຳທີ່ເກີດຂຶ້ນແລ້ວແກ່ເຮົາ ເມື່ອເຮົາຍັງລະບໍ່ໄດ້ ເພິ່ງເປັນໄປເພື່ອຄວາມພິນາດ ຍ່ອມສະດຸ້ງຢ້ານ ໂດຍຄິດວ່າ ກຸສົນທຳທີ່ຍັງບໍ່ເກີດຂຶ້ນແກ່ເຮົາ ເມື່ອບໍ່ເກີດຂຶ້ນ ເພິ່ງເປັນໄປເພື່ອຄວາມພິນາດ ຍ່ອມສະດຸ້ງຢ້ານ ໂດຍຄິດວ່າ ກຸສົນທຳທີ່ເກີດຂຶ້ນແກ່ເຮົາ ເມື່ອດັບ ເພິ່ງເປັນໄປເພື່ອຄວາມພິນາດ

ພິກຂຸຊື່ວ່າ ມີຄວາມສະດຸ້ງຢ້ານ ເປັນແນວນີ້

ພິກຂຸເປັນຜູ້ມີຄວາມພຽນເຄື່ອງເຜົາກິເລດ ມີຄວາມສະດຸ້ງຢ້ານ ເປັນຜູ້ຄວນເພື່ອຕັດສະຮູ້ ຄວນເພື່ອນິບພານ ຄວນເພື່ອບັນລຸທຳອັນກະເສມຈາກໂຍຄະຢ່າງຍອດຢ້ຽມ ເປັນແນວນີ້

**ອະໂນດຕັບປີສູດທີ ໘ ຈົບ**

# ៩. ຈັນທູປະມາສູດ

## ວ່າດ້ວຍການປຽບທຽບພິກຂຸກັບດວງຈັນ

[໑໘໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງເປັນຄືດວງຈັນ ຈົ່ງພາກກາຍ ພາກຈິດອອກ ເປັນຜູ້ໃໝ່ສະເໝີ ບໍ່ຄະນອງ ເຂົ້າໄປສູ່ຕະກູນທັງຫຼາຍເທີ້ນ

ປຽບຄື ບຸຣຸດເພິ່ງພາກກາຍ ພາກຈິດ ແນມເບິ່ງນ້ຳສ້າງເຊິ່ງຊຸດໂຊມ ພູທີ່ຊຸຂະ ຫຼື ແມ່ນ້ຳທີ່ຂາດເປັນຫ້ວງ ໆ ອຸປະມານີ້ສັນໃດ ອຸປະໄມນັ້ນກໍສັນນັ້ນ ທ່ານທັງຫຼາຍກໍຈົ່ງເປັນ ຄື ດວງຈັນຈົ່ງພາກກາຍພາກຈິດອອກ ເປັນຜູ້ໃໝ່ສະເໝີ ບໍ່ຄະນອງ ເຂົ້າໄປສູ່ຕະກູນທັງຫຼາຍ

ກັດສະປະ ປຽບຄື ດວງຈັນ ພາກກາຍພາກຈິດອອກ ເປັນຜູ້ໃໝ່ສະເໝີ ບໍ່ຄະນອງເຂົ້າໄປສູ່ຕະກູນທັງຫຼາຍ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ພິກຂຸ ຢ່າງໃດ? ຈຶ່ງສົມຄວນເຂົ້າໄປສູ່ຕະກູນ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫລັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນທີ່ເພິ່ງ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂອກາສ ສະເພາະພຣະຜູ້ມີພຣະພາກເຈົ້າທ່ານັ້ນ ທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພາສິດນັ້ນໃຫ້ແຈ້ງຊັດໄດ້ ພິກຂຸທັງຫຼາຍ ຟັງຕໍ່ຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງໂບກຝາພຣະຫັດໃນອາກາດ ຕັດວ່າ ພິກຂຸ ທັງຫຼາຍ ຝາມືນີ້ບໍ່ຂ້ອງ ບໍ່ຢຶດ ບໍ່ຕິດໃນອາກາດ ສັນໃດ ຈິດຂອງພິກຂຸອົງໃດອົງໜຶ່ງ ຜູ້ເຂົ້າໄປສູ່ຕະກູນ ບໍ່ຂ້ອງບໍ່ຢຶດ ບໍ່ຕິດໃນຕະກູນທັງຫຼາຍ ໂດຍຄິດວ່າ ຜູ້ປາຖະໜາລາບ ຈົ່ງໄດ້ລາບ ສ່ວນຜູ້ປາຖະໜາບຸນ ຈົ່ງທຳບຸນ ສັນນັ້ນ ພິກຂຸເປັນຜູ້ພໍໃຈ ດີໃຈ ດ້ວຍລາບ ອັນເປັນຂອງຕົນ ສັນໃດ ກໍຈົ່ງເປັນຜູ້ພໍໃຈ ດີໃຈ ດ້ວຍລາບຂອງຊົນເຫຼົ່າອື່ນ ສັນນັ້ນ ພິກຂຸ ແນວນີ້ຈຶ່ງສົມຄວນເຂົ້າໄປສູ່ຕະກູນ

ຈິດຂອງກັດສະປະຜູ້ເຂົ້າໄປສູ່ຕະກູນ ບໍ່ຂ້ອງ ບໍ່ຢຶດ ບໍ່ຕິດໃນຕະກູນທັງຫຼາຍ ໂດຍຄິດວ່າ ຜູ້ປາຖະໜາລາບ ຈົ່ງໄດ້ລາບ ສ່ວນຜູ້ປາຖະໜາບຸນ ຈົ່ງທຳບຸນ ກັດສະປະເປັນຜູ້ ພໍໃຈ ດີໃຈ ດ້ວຍລາບອັນເປັນຂອງຕົນ ສັນໃດ ພິກຂຸເປັນຜູ້ພໍໃຈ ດີໃຈ ດ້ວຍລາບຂອງຊົນເຫຼົ່າອື່ນ ສັນນັ້ນ

ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ທຳມະເທດສະໜາຂອງພິກຂຸຢ່າງໃດບໍ່ບໍລິສຸດ ຂອງພິກຂຸຢ່າງໃດບໍລິສຸດ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫລັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນທີ່ເພິ່ງ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂອກາດ ສະເພາະພຣະຜູ້ມີພຣະພາກເຈົ້າທ່ານັ້ນ ທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພາສິດນັ້ນໃຫ້ແຈ້ງຊັດໄດ້ ພິກຂຸທັງຫຼາຍ ຟັງຕໍ່ຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້

ພິກຂຸທັງຫຼາຍ ຖ້າແນວນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸອົງໃດອົງໜຶ່ງ ມີຄວາມຄິດຢ່າງນີ້ວ່າ ຂໍຊົນທັງຫຼາຍເພິ່ງຟັງທຳຂອງເຮົາ ເມື່ອຟັງແລ້ວ ເພິ່ງເຫຼື້ອມໃສທຳ ແລະ ຜູ້ທີ່ເຫຼື້ອມໃສແລ້ວ ເພິ່ງເຮັດອາການຂອງຜູ້ທີ່ເຫຼື້ອມໃສຕໍ່ເຮົາ ຈຶ່ງສະແດງທຳແກ່ຊົນເຫຼົ່າອື່ນ

ທຳມະເທດສະໜາຂອງພິກຂຸແນວນີ້ຊື່ວ່າ ບໍ່ບໍລິສຸດ

ສ່ວນພິກຂຸອົງໃດອົງໜຶ່ງ ມີຄວາມຄິດຢ່າງນີ້ວ່າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນຮຽກໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ເຮັດຈັ່ງໃດບໍ ຊົນທັງຫຼາຍເພິ່ງຟັງທຳຂອງເຮົາ ເມື່ອຟັງແລ້ວ ເພິ່ງຮູ້ທົ່ວເຖິງທຳ ແລະ ເມື່ອຮູ້ທົ່ວເຖິງແລ້ວ ເພິ່ງປະຕິບັດເພື່ອຄວາມເປັນແນວນັ້ນ ຈຶ່ງສະແດງທຳແກ່ຊົນເຫຼົ່າອື່ນ ທ່ານອາໄສຄວາມທີ່ທຳເປັນທຳດີຈຶ່ງສະແດງທຳແກ່ຊົນເຫຼົ່າອື່ນ ອາໄສຄວາມກະລຸນາຈຶ່ງສະແດງທຳແກ່ຊົນເຫຼົ່າອື່ນ ອາໄສຄວາມອີດູຈຶ່ງສະແດງທຳແກ່ຊົນເຫຼົ່າອື່ນ ອາໄສຄວາມອະນຸເຄາະຈຶ່ງສະແດງທຳແກ່ຊົນເຫຼົ່າອື່ນ ດ້ວຍປະການດັ່ງນີ້

ທຳມະເທດສະໜາຂອງພິກຂຸແນວນີ້ຊື່ວ່າ ບໍລິສຸດ

ກັດສະປະມີຄວາມຄິດ ຢ່າງນີ້ວ່າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມ ເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ເຮັດຈັ່ງໃດບໍ? ຊົນທັງຫຼາຍເພິ່ງຟັງທຳຂອງເຮົາ ເມື່ອຟັງແລ້ວ ເພິ່ງຮູ້ທົ່ວເຖິງທຳ ແລະເມື່ອຮູ້ທົ່ວເຖິງແລ້ວ ເພິ່ງປະຕິບັດເພື່ອຄວາມເປັນແນວນັ້ນ ຈຶ່ງສະແດງທຳແກ່ຊົນເຫຼົ່າອື່ນ ທ່ານອາໄສຄວາມທີ່ທຳເປັນທຳດີຈຶ່ງສະແດງທຳແກ່ຊົນເຫຼົ່າອື່ນ ອາໄສຄວາມກະລຸນາຈຶ່ງສະແດງທຳແກ່ຊົນເຫຼົ່າອື່ນ ອາໄສຄວາມອີດູຈຶ່ງສະແດງທຳແກ່ຊົນເຫຼົ່າອື່ນ ອາໄສຄວາມອະນຸເຄາະຈຶ່ງສະແດງທຳແກ່ຊົນເຫຼົ່າອື່ນ ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ເຮົາຈັກກ່າວສອນທ່ານທັງຫຼາຍໃຫ້ (ປະພຶດ) ຕາມກັດສະປະ ຫຼື ຜູ້ໃດເພິ່ງເປັນຄືກັດສະປະ ເຮົາຈັກກ່າວສອນໃຫ້ປະພຶດຕາມຜູ້ນັ້ນ ແລະ ທ່ານທັງຫຼາຍຜູ້ໄດ້ຮັບໂອວາດແລ້ວ ເພິ່ງປະຕິບັດເພື່ອຄວາມເປັນແນວນັ້ນ

**ຈັນທູປະມາສູດທີ ໓ ຈົບ**

# ໔. ກຸລູປະກະສູດ

## ວ່າດ້ວຍພິກຂຸຜູ້ເຂົ້າໄປສູ່ຕະກູນ

[໑໔໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ພິກຂຸຢ່າງໃດ ສົມຄວນເຂົ້າໄປສູ່ຕະກູນ ພິກຂຸຢ່າງໃດບໍ່ສົມຄວນເຂົ້າໄປສູ່ຕະກູນ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າ ເປັນຫລັກ ຯລຯ

ພິກຂຸທັງຫຼາຍ ພິກຂຸອົງໃດອົງໜຶ່ງມີຄວາມຄິດ ຢ່າງນີ້ວ່າ ຂໍຊົນທັງຫຼາຍຈົ່ງໃຫ້ເຮົາທີ່ນັ້ນ ຢ່າໄດ້ບໍ່ໃຫ້ເລີຍ ຈົ່ງໃຫ້ເຮົາຫຼາຍ ໆ ຢ່າໃຫ້ໜ້ອຍ ຈົ່ງໃຫ້ຂອງປະນີດແກ່ເຮົາທີ່ນັ້ນ ຢ່າໃຫ້ຂອງເສົ້າໝອງ ຈົ່ງຟ້າວໃຫ້ເຮົາ ຢ່າໃຫ້ຊ້າ ຈົ່ງໃຫ້ເຮົາໂດຍເຄົາລົບ ຢ່າໃຫ້ໂດຍບໍ່ ຄົາລົບ ຈຶ່ງເຂົ້າໄປສູ່ຕະກູນ ເມື່ອພິກຂຸນັ້ນມີຄວາມຄິດ ຢ່າງນີ້ເຂົ້າໄປສູ່ຕະກູນ ຊົນທັງຫຼາຍບໍ່ໃຫ້ ພິກຂຸຈຶ່ງອຶດອັດຍ້ອນສາເຫດນັ້ນ ທ່ານສະເຫວີຍທຸກໂທມະນັດຍ້ອນສາເຫດນັ້ນ ຊົນທັງຫຼາຍໃຫ້ນ້ອຍ ບໍ່ໃຫ້ຫຼາຍ ຯລຯ ໃຫ້ຂອງເສົ້າໝອງ ບໍ່ໃຫ້ຂອງປະນີດ ໃຫ້ຊ້າ ບໍ່ໃຫ້ໄວ ພິກຂຸຈຶ່ງອຶດອັດຍ້ອນສາເຫດນັ້ນ ທ່ານສະເຫວີຍທຸກໂທມະນັດຍ້ອນສາເຫດນັ້ນ ຊົນທັງຫຼາຍໃຫ້ໂດຍບໍ່ ເຄົາລົບ ບໍ່ໃຫ້ໂດຍເຄົາລົບ ພິກຂຸຈຶ່ງອຶດອັດຍ້ອນສາເຫດນັ້ນ ທ່ານສະເຫວີຍທຸກໂທມະນັດຍ້ອນສາເຫດນັ້ນ

ພິກຂຸແນວນີ້ ບໍ່ສົມຄວນເຂົ້າໄປສູ່ຕະກູນ

ສ່ວນພິກຂຸອົງໃດອົງໜຶ່ງມີຄວາມຄິດ ແນວນີ້ວ່າ ເຮົາເພິ່ງໄດ້ປັດໄຈ ໔ ໃນຕະກູນ ອື່ນ ໆ ຈາກບ່ອນໃດ ຂໍຊົນທັງຫຼາຍຈົ່ງໃຫ້ເຮົາທີ່ນັ້ນ ຢ່າໄດ້ບໍ່ໃຫ້ເລີຍ ຈົ່ງໃຫ້ເຮົາຫຼາຍ ໆ ຢ່າໃຫ້ໜ້ອຍ ຈົ່ງໃຫ້ຂອງປະນີດແກ່ເຮົາທີ່ນັ້ນ ຢ່າໃຫ້ຂອງເສົ້າໝອງ ຈົ່ງຟ້າວໃຫ້ເຮົາ ຢ່າໃຫ້ຊ້າ ຈົ່ງໃຫ້ເຮົາໂດຍເຄົາລົບ ຢ່າໃຫ້ໂດຍບໍ່ເຄົາລົບ ຈຶ່ງເຂົ້າໄປສູ່ຕະກູນ ຖ້າເມື່ອພິກຂຸນັ້ນມີຄວາມຄິດແນວນີ້ເຂົ້າໄປສູ່ຕະກູນ ຊົນທັງຫຼາຍບໍ່ໃຫ້ ພິກຂຸບໍ່ອຶດອັດຍ້ອນສາເຫດນັ້ນ ທ່ານບໍ່ສະເຫວີຍທຸກໂທມະນັດຍ້ອນສາເຫດນັ້ນ ຊົນທັງຫຼາຍໃຫ້ໜ້ອຍ ບໍ່ໃຫ້ຫຼາຍ ພິກຂຸຈຶ່ງບໍ່ອຶດອັດຍ້ອນສາເຫດນັ້ນ ທ່ານບໍ່ສະເຫວີຍທຸກໂທມະນັດຍ້ອນສາເຫດນັ້ນ ຊົນທັງຫຼາຍ ໃຫ້ຂອງເສົ້າໝອງ ບໍ່ໃຫ້ຂອງປະນີດ ຯລຯ ໃຫ້ຊ້າ ບໍ່ໃຫ້ໄວ ພິກຂຸບໍ່ອຶດອັດຍ້ອນ ສາເຫດນັ້ນ ທ່ານບໍ່ສະເຫວີຍທຸກໂທມະນັດຍ້ອນສາເຫດນັ້ນ ຊົນທັງຫຼາຍໃຫ້ໂດຍບໍ່ເຄົາລົບ ບໍ່ໃຫ້ໂດຍເຄົາລົບ ພິກຂຸບໍ່ອຶດອັດຍ້ອນສາເຫດນັ້ນ ທ່ານບໍ່ສະເຫວີຍທຸກໂທມະນັດຍ້ອນສາເຫດນັ້ນ

ພິກຂຸແບບນີ້ ສົມຄວນເຂົ້າໄປສູ່ຕະກູນ

ກັດສະປະມີຄວາມຄິດ ແບບນີ້ວ່າເຮົາເພິ່ງໄດ້ປັດໄຈ ໔ ໃນຕະກູນອື່ນ ໆ ແຕ່ບ່ອນໃດ ຂໍຊົນທັງຫຼາຍ ຈົ່ງໃຫ້ເຮົາທໍ່ນັ້ນ ຢ່າໄດ້ບໍ່ໃຫ້ເລີຍ ຈົ່ງໃຫ້ເຮົາຫຼາຍ ໆ ຢ່າໃຫ້ໜ້ອຍ ຯລຯ ຈຶ່ງ ເຂົ້າໄປສູ່ຕະກູນ ຊົນທັງຫຼາຍບໍ່ໃຫ້ ກັດສະປະບໍ່ອຶດອັດຍ້ອນສາເຫດນັ້ນ ທ່ານບໍ່ສະເຫວີຍທຸກໂທ ມະນັດຍ້ອນສາເຫດນັ້ນ ຊົນທັງຫຼາຍໃຫ້ນ້ອຍ ບໍ່ໃຫ້ຫຼາຍ ກັດສະປະບໍ່ອຶດອັດຍ້ອນສາເຫດນັ້ນ ທ່ານບໍ່ສະເຫວີຍທຸກໂທມະນັດຍ້ອນສາເຫດນັ້ນ ຊົນທັງຫຼາຍໃຫ້ຂອງເສົ້າໝອງ ບໍ່ໃຫ້ຂອງປະນີດ ກັດສະປະບໍ່ອຶດອັດຍ້ອນສາເຫດນັ້ນ ທ່ານບໍ່ສະເຫວີຍທຸກໂທມະນັດ ຊົນທັງຫຼາຍໃຫ້ຊ້າ ບໍ່ໃຫ້ໄວ ກັດສະປະບໍ່ອຶດອັດຍ້ອນສາເຫດນັ້ນ ທ່ານບໍ່ສະເຫວີຍທຸກໂທມະນັດຍ້ອນສາເຫດນັ້ນ ຊົນ ທັງຫຼາຍໃຫ້ໂດຍບໍ່ເຄົາລົບ ບໍ່ໃຫ້ໂດຍເຄົາລົບ ກັດສະປະບໍ່ອຶດອັດຍ້ອນ ສາເຫດນັ້ນ ທ່ານບໍ່ສະ ເຫວີຍທຸກໂທມະນັດຍ້ອນສາເຫດນັ້ນ

ພິກຂຸທັງຫຼາຍ ເຮົາຈັກກ່າວສອນທ່ານທັງຫຼາຍໃຫ້ (ປະພຶດ) ຕາມກັດສະປະ ຫຼື ຜູ້ໃດ ເພິ່ງເປັນເຊັ່ນກັດສະປະ ເຮົາຈັກກ່າວສອນໃຫ້ປະພຶດຕາມຜູ້ນັ້ນ ແລະທ່ານທັງຫຼາຍຜູ້ໄດ້ຮັບໂອ ວາດແລ້ວເພິ່ງປະຕິບັດເພື່ອຄວາມເປັນແບບນັ້ນ

**ກຸລູປະກະສູດທີ ໔ ຈົບ**

# ໕. ຊິນນະສູດ

## ວ່າດ້ວຍຄວາມແກ່

[໑໔໗] ຂ້າພະເຈົ້າໄດ້ສະດັບມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ຯລຯ

ຄັ້ງນັ້ນ ທ່ານພຣະມະຫາກັດສະປະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກໄດ້ຕັດກັບທ່ານພຣະມະຫາກັດ ສະປະດັ່ງນີ້ ວ່າ

ກັດສະປະ ບັດນີ້ທ່ານແກ່ແລ້ວ ຜ້າປ່ານບັງສຸກຸນເຫຼົ່ານີ້ຂອງທ່ານໜັກ ບໍ່ໜ້ານຸ່ງຫົ່ມ ຍ້ອນແບບນັ້ນ ທ່ານຈົ່ງໃຊ້ສອຍຄະຫະບໍດີຈີວອນ ຈົ່ງບໍຣິໂພກໂພຊະນະທີ່ເຂົານິມົນ ແລະຈົ່ງຢູ່ ໃນສຳນັກຂອງເຮົາເທີ້ນ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ແລະກ່າວສັນເສີນຄຸນແຫ່ງການຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ແລະກ່າວສັນເສີນຄຸນແຫ່ງການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງການນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງການຊົງໄຕຣຈີວອນເປັນຂໍ້ວັດປະຕິບັດ ເປັນຜູ້ມັກໜ້ອຍ ແລະ ກ່າວສັນເສີນຄຸນແຫ່ງຄວາມມັກໜ້ອຍ ເປັນຜູ້ສັນໂດດ ແລະ ກ່າວສັນເສີນຄຸນແຫ່ງຄວາມສັນໂດດ ສະຫງັດຈາກໝູ່ ແລະ ກ່າວສັນເສີນຄຸນແຫ່ງຄວາມສະຫງັດຈາກໝູ່ ບໍ່ຄຸກຄີດ້ວຍໝູ່ ແລະ ກ່າວສັນເສີນຄຸນແຫ່ງຄວາມບໍ່ຄຸກຄີດ້ວຍໝູ່ ເປັນຜູ້ພາຣົບຄວາມພຽນແລະກ່າວສັນເສີນຄຸນແຫ່ງການພາຣົບຄວາມພຽນ ຕະຫຼອດການລະນານ

ທ່ານພິຈາລະນາເຫັນອຳນາດປະໂຫຍດອັນໃດ ຈຶ່ງເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ແລະກ່າວສັນເສີນຄຸນແຫ່ງການຢູ່ປ່າເປັນຂໍ້ວັດປະຕິບັດ ຕະຫຼອດການລະນານ

**(ຂໍ້ຄວາມທີ່ຫຍໍ້ໄວ້ເປັນແນວດຽວກັນ)**

ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ฯລฯ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ฯລฯ ເປັນຜູ້ ຊົງໄຕຣຈີວອນເປັນຂໍ້ວັດປະຕິບັດ ฯລฯ ເປັນຜູ້ມັກໜ້ອຍ ฯລฯ ເປັນຜູ້ສັນໂດດ ฯລฯ ເປັນຜູ້ສະຫງັດຈາກໝູ່ ฯລฯ ບໍ່ຄຸກຄີດ້ວຍໝູ່ ฯລฯ ເປັນຜູ້ພາຣົບຄວາມພຽນແລະກ່າວສັນເສີນຄຸນແຫ່ງການພາຣົບຄວາມພຽນ

ຂ້າພຣະອົງພິຈາລະນາເຫັນອຳນາດປະໂຫຍດ ໔ ປະການ ຈຶ່ງເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດແລະກ່າວສັນເສີນຄຸນແຫ່ງການຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ฯລฯ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ฯລฯ ເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດປະຕິບັດ ฯລฯ ເປັນຜູ້ມັກໜ້ອຍ ฯລฯ ເປັນຜູ້ສັນໂດດ ฯລฯ ເປັນຜູ້ສະຫງັດຈາກໝູ່ ฯລฯ ບໍ່ຄຸກຄີດ້ວຍໝູ່ ฯລฯ ເປັນຜູ້ພາຣົບຄວາມພຽນ ແລະ ກ່າວສັນເສີນຄຸນແຫ່ງການພາຣົບຄວາມພຽນຕະຫຼອດການລະນານ

ຄື ພິຈາລະນາເຫັນການຢູ່ເປັນສຸກໃນປັດຈຸບັນຂອງຕົນ ແລະ ອະນຸເຄາະໝູ່ຊົນໃນພາຍຫຼັງວ່າ ເຮັດແນວໃດ ໝູ່ຊົນໃນພາຍຫຼັງເພິ່ງເຖິງການປະພຶດຕາມແບບຢ່າງວ່າ ໄດ້ຂ່າວວ່າພຣະພຸດທະເຈົ້າ ແລະ ພຣະພຸດທະສາວົກທີ່ໄດ້ມີມາແລ້ວ ທ່ານເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດແລະກ່າວສັນເສີນຄຸນແຫ່ງການຢູ່ປ່າເປັນຂໍ້ວັດປະຕິບັດ ຕະຫຼອດການລະນານ ฯລฯ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ฯລฯ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ฯລฯ ເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດປະຕິບັດ ฯລฯ ເປັນຜູ້ມັກໜ້ອຍ ฯລฯ ເປັນຜູ້ສັນໂດດ ฯລฯ ເປັນຜູ້

ສະຫງັດຈາກໝູ່ ໆລໆ ບໍ່ຄຸກຄີດ້ວຍໝູ່ ໆລໆ ເປັນຜູ້ຜາຣົບຄວາມພຽນ ແລະ ກ່າວສັນເສີນຄຸນແຫ່ງການຜາຣົບຄວາມພຽນ ຢ່າງນີ້

ທ່ານເຫຼົ່ານັ້ນ ຈັກປະຕິບັດເພື່ອຄວາມເປັນແນວນັ້ນ ຂໍ້ປະຕິບັດຂອງທ່ານເຫຼົ່ານັ້ນຈັກເປັນໄປເພື່ອປະໂຫຍດ ເພື່ອຄວາມສຸກຕະຫຼອດການລະນານ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງພິຈາລະນາເຫັນອຳນາດປະໂຫຍດ ໒ ປະການນີ້ຈຶ່ງເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງການຢູ່ປ່າເປັນຂໍ້ວັດປະຕິບັດ ໆລໆ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ໆລໆ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ໆລໆ ເປັນຜູ້ຊົງໄຕຣຈີວອນ ເປັນຂໍ້ວັດປະຕິບັດ ໆລໆ ເປັນຜູ້ມັກໜ້ອຍ ໆລໆ ເປັນຜູ້ສັນໂດດ ໆລໆ ເປັນຜູ້ສະຫງັດຈາກໝູ່ ໆລໆ ບໍ່ຄຸກຄີດ້ວຍໝູ່ ໆລໆ ເປັນຜູ້ຜາຣົບຄວາມພຽນ ແລະກ່າວສັນເສີນຄຸນແຫ່ງການຜາຣົບຄວາມພຽນຕະຫຼອດການລະນານ

ດີແລ້ວ ດີແລ້ວ ກັດສະປະ ໄດ້ຂ່າວວ່າ ທ່ານປະຕິບັດເພື່ອປະໂຫຍດເກື້ອກູນແກ່ຊົນເປັນຈຳນວນຫຼາຍ ເພື່ອຄວາມສຸກແກ່ຊົນເປັນຈຳນວນຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກແກ່ເທວະດາແລະມະນຸດທັງຫຼາຍ ຍ້ອນແນວນັ້ນ ທ່ານຈົ່ງນຸ່ງຫົ່ມຜ້າປ່ານບັງສຸກຸນທີ່ໃຊ້ແລ້ວ ຈົ່ງທ່ຽວບິນທະບາດ ແລະ ຈົ່ງຢູ່ໃນປ່າເທີ້ນ

**ຊິນນະສູດທີ ໕ ຈົບ**

# ໖. ໂອວາທະສູດ

## ວ່າດ້ວຍການໃຫ້ໂອວາດ

[໑໔໙] ພຣະຜູ້ມີພຣະພາກເຈົ້າປະທັບ ໃນພຣະເວລຸວັນ ໆລໆ ເຂດເມືອງຣາຊະຄຶ ໆລໆ

ຄັ້ງນັ້ນ ທ່ານພຣະມະຫາກັດສະປະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກໄດ້ຕັດກັບທ່ານພຣະມະຫາກັດສະປະດັ່ງນີ້ ວ່າ

ກັດສະປະ ທ່ານຈົ່ງກ່າວສອນພິກຂຸ ຈົ່ງສະແດງທຳມີກະຖາແກ່ພິກຂຸທັງຫຼາຍເທີ້ນ ເຮົາຫຼືທ່ານເພິ່ງກ່າວສອນ ເພິ່ງສະແດງທຳມີກະຖາແກ່ພິກຂຸທັງຫຼາຍ

ຂ້າແດ່ ພຣະອົງຜູ້ຈະເລີນ ໃນບັດນີ້ພິກຂຸທັງຫຼາຍເປັນຜູ້ວ່າຍາກ ປະກອບດ້ວຍທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ ບໍ່ອົດທົນ ບໍ່ຮັບຄຳພ່ຳສອນໂດຍເຄົາລົບ ຂ້າພຣະອົງໄດ້ເຫັນພິກຂຸ ຊື່ເຄື່ອງ

ຂອງສັດທິວິຫາຣິກຂອງພຣະອານົນ ແລະ ພິກຂຸຊື່ອາພິດຊິກະ ສັດທິວິຫາຣິກຂອງພຣະອະນຸຣຸດທະໃນພຣະທຳວິໄນນີ້ ກ່າວລ່ວງເກີນກັນແລະກັນດ້ວຍສຸຕະວ່າ ມາເທີ້ນ ພິກຂຸໃຜຈັກກ່າວໄດ້ຫຼາຍກວ່າກັນ ໃຜຈັກກ່າວໄດ້ດີກວ່າກັນ ແລະ ໃຜຈັກກ່າວໄດ້ດົນກວ່າກັນ

ຄັ້ງນັ້ນ ພຣະຜູ້ພຣະພາກຮັບສັ່ງຮຽກພິກຂຸອົງໜຶ່ງມາຕັດວ່າ ມາເທີ້ນພິກຂຸ ທ່ານຈົ່ງຮຽກພິກຂຸພັດທະ ສັດທິວິຫາຣິກຂອງອານົນ ແລະ ພິກຂຸອາພິດຊິກະ ສັດທິວິຫາຣິກຂອງອະນຸຣຸດທະມາຕາມຄຳຂອງເຮົາ ວ່າ ພຣະສາດສະດາຮັບສັ່ງໃຫ້ທ່ານທັງ ໔ ເຂົ້າເຝົ້າ ພິກຂຸນັ້ນ ທູນຮັບສະໜອງພຣະດຳຣັດແລ້ວໄດ້ເຂົ້າໄປຫາພິກຂຸເຫຼົ່ານັ້ນຮອດບ່ອນຢູ່ ໄດ້ກ່າວວ່າ ພຣະສາດສະດາ ຮັບສັ່ງໃຫ້ທ່ານທັງ ໔ ເຂົ້າເຝົ້າ

ພິກຂຸເຫຼົ່ານັ້ນ ຮັບຄຳແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມພິກຂຸເຫຼົ່ານັ້ນດັ່ງນີ້ ວ່າ

ພິກຂຸທັງຫຼາຍ ໄດ້ຂ່າວວ່າ ທ່ານທັງຫຼາຍ ໄດ້ກ່າວລ່ວງເກີນກັນແລະກັນດ້ວຍສຸຕະວ່າ ມາເທີ້ນພິກຂຸ ໃຜຈັກກ່າວໄດ້ຫຼາຍກວ່າກັນ ໃຜຈັກກ່າວໄດ້ດີກວ່າກັນ ໃຜຈັກກ່າວໄດ້ດົນກວ່າກັນ ແມ່ນບໍ?

ແມ່ນ ຂ້ານ້ອຍ

ທ່ານທັງຫຼາຍ ຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວ ຢ່າງນີ້ບໍ? ທ່ານທັງຫຼາຍຈຶ່ງກ່າວລ່ວງເກີນກັນແລະກັນດ້ວຍສຸຕະ ຢ່າງນີ້ວ່າ ມາເທີ້ນພິກຂຸ ໃຜຈັກກ່າວໄດ້ຫຼາຍວ່າກັນ ໃຜຈັກກ່າວໄດ້ດີກວ່າກັນ ໃຜຈັກກ່າວໄດ້ດົນກວ່າກັນ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ໄດ້ຂ່າວວ່າ ຖ້າທ່ານທັງຫຼາຍບໍ່ຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວຢ່າງນີ້ ໂມຄະບຸຣຸດ ເມື່ອເປັນເຊັ່ນນັ້ນ ທ່ານທັງຫຼາຍຮູ້ເຫັນອັນໃດ ບວດຢູ່ໃນທຳວິໄນທີ່ເຮົາກ່າວດີແລ້ວ ຢ່າງນີ້ຍັງກ່າວລ່ວງເກີນກັນແລະກັນດ້ວຍສຸຕະໄປເຮັດຫຍັງນໍ ວ່າ ມາເທີ້ນພິກຂຸ ໃຜຈັກກ່າວໄດ້ຫຼາຍກວ່າກັນ ໃຜຈັກກ່າວໄດ້ດີກວ່າກັນ ໃຜຈັກກ່າວໄດ້ດົນກວ່າກັນ

ລຳດັບນັ້ນ ພິກຂຸທັງ ໔ ຮູບ ໄດ້ນ້ອມຫົວລົງແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍ ບວດໃນພຣະທຳວິໄນທີ່ພຣະຜູ້ມີພຣະພາກຕັດດີແລ້ວ ຢ່າງນີ້ ໄດ້ກ່າວລ່ວງເກີນກັນ ແລະ ກັນດ້ວຍສຸຕະຍ້ອນຄວາມໂງ່ຈ້າເບົາປັນຍາວ່າ ມາເທີ້ນພິກຂຸ ໃຜຈັກກ່າວໄດ້ຫຼາຍກວ່າກັນ ໃຜຈັກກ່າວໄດ້ດີກວ່າກັນ ໃຜຈັກກ່າວ

ໄດ້ດົນກວ່າກັນ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງໃຫ້ອະໄພໂທດແກ່ຂ້າພຣະອົງທັງຫຼາຍ ເພື່ອສັງລວມຕໍ່ໄປດ້ວຍເທີ້ນ

ພິກຂຸທັງຫຼາຍ ຖ້າຈັ່ງຊັ້ນ ການທີ່ທ່ານທັງຫຼາຍບວດໃນທຳວິໄນທີ່ເຮົາກ່າວດີແລ້ວ ຢ່າງນີ້ ໄດ້ກ່າວລ່ວງເກີນກັນ ແລະ ກັນດ້ວຍສຸຕະ ຍ້ອນຄວາມໂງ່ຈ້າເບົາປັນຍາວ່າ ມາເທີ້ນພິກຂຸ ໃຜຈັກກ່າວໄດ້ຫຼາຍກວ່າກັນ ໃຜຈັກກ່າວໄດ້ດີກວ່າກັນ ໃຜຈັກກ່າວໄດ້ດົນກວ່າກັນ ຍ້ອນເຫດທີ່ເຫັນຄວາມຜິດເປັນຄວາມຜິດ ແລ້ວແກ້ໄຂໃຫ້ຖືກຕ້ອງ ຂໍ້ນັ້ນ ເຮົາຍອມຮັບທ່ານທັງຫຼາຍໄດ້ ຍ້ອນການທີ່ບຸກຄົນເຫັນຄວາມເຫັນຜິດເປັນຄວາມຜິດແລ້ວ ແກ້ໄຂໃຫ້ຖືກຕ້ອງແລະສັງລວມຕໍ່ໄປ ນີ້ເປັນຄວາມຈະເລີນໃນວິໄນຂອງພຣະອະຣິຍະ

**ໂອວາທະສູດທີ ໗ ຈົບ**

# ໗. ທຸຕິຍະໂອວາທະສູດ

## ວ່າດ້ວຍການໃຫ້ໂອວາດ ສູດທີ ໔

[໑໕໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ເຂດເມືອງຣາຊະຄຶ ຯລຯ

ຄັ້ງນັ້ນ ທ່ານພຣະມະຫາກັດສະປະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະມະຫາກັດສະປະດັ່ງນີ້ ວ່າ

ກັດສະປະ ທ່ານຈົ່ງກ່າວສອນພິກຂຸ ຈົ່ງສະແດງທຳມີກະຖາແກ່ພິກຂຸທັງຫຼາຍເທີ້ນ ເຮົາຫຼືທ່ານເພິ່ງກ່າວສອນ ເພິ່ງສະແດງທຳມີກະຖາແກ່ພິກຂຸທັງຫຼາຍ

ຂ້າແດ່ ພຣະອົງຜູ້ຈະເລີນ ໃນບັດນີ້ພິກຂຸທັງຫຼາຍເປັນຜູ້ວ່າຍາກ ປະກອບດ້ວຍທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ ບໍ່ອົດທົນ ບໍ່ຮັບຄຳພໍ່າສອນໂດຍເຄົາລົບ ບຸກຄົນລາງຄົນບໍ່ມີສັດທາ ບໍ່ມີຫິຣິ ບໍ່ມີໂອດຕັບປະ ບໍ່ມີວິຣິຍະ ບໍ່ມີປັນຍາ ໃນກຸສົນທຳທັງຫຼາຍ ຄືນວັນທີຜ່ານມາ ເຂົາຫວັງໄດ້ແຕ່ຄວາມເສື່ອມໃນກຸສົນທຳທັງຫຼາຍທີ່ນັ້ນ ຫວັງຄວາມຈະເລີນບໍ່ໄດ້ເລີຍ

ປຽບຄື ດວງຈັນຂ້າງແຮມຍ່ອມອັບແສງ ບໍ່ເຕັມດວງ ຂາດຣັດສະໝີ ວັດຄວາມຍາວແລະຄວາມກວ້າງບໍ່ໄດ້ ຕະຫຼອດຄືນວັນທີຜ່ານມາ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ບຸກຄົນລາງຄົນບໍ່ມີສັດທາ ບໍ່ມີຫິຣິ ຯລຯ ບໍ່ມີໂອດຕັບປະ ຯລຯ ບໍ່ມີວິຣິຍະ ຯລຯ ບໍ່ມີປັນຍາ ໃນກຸສົນທຳທັງຫຼາຍ ຕະຫຼອດຄືນວັນທີຜ່ານມາ ເຂົາຫວັງໄດ້ແຕ່ຄວາມເສື່ອມໃນກຸສົນທຳທັງຫຼາຍທີ່ນັ້ນ ຫວັງຄວາມຈະເລີນບໍ່ໄດ້ເລີຍ

ຂໍ້ທີ່ບຸຣຸດບຸກຄົນບໍ່ມີສັດທານີ້ ເປັນຄວາມເສື່ອມ ຂໍ້ທີ່ບຸຣຸດບຸກຄົນບໍ່ມີຫິຣິນີ້ ເປັນຄວາມເສື່ອມ ຂໍ້ທີ່ບຸຣຸດບຸກຄົນບໍ່ມີໂອດຕັບປະນີ້ ເປັນຄວາມເສື່ອມ ຂໍ້ທີ່ບຸຣຸດບຸກຄົນ ເປັນຄົນຂີ້ຄ້ານນີ້ ເປັນຄວາມເສື່ອມ ຂໍ້ທີ່ບຸຣຸດບຸກຄົນມີປັນຍາຊາມນີ້ ເປັນຄວາມເສື່ອມ ຂໍ້ທີ່ບຸຣຸດບຸກຄົນເປັນຜູ້ມັກໂກດນີ້ ເປັນຄວາມເສື່ອມ ຂໍ້ທີ່ບຸຣຸດບຸກຄົນຜູກໂກດນີ້ ເປັນຄວາມເສື່ອມ ຂໍ້ທີ່ບໍ່ມີພິກຂຸຜູ້ກ່າວສອນນີ້ ເປັນຄວາມເສື່ອມ

ບຸກຄົນລາງຄົນມີສັດທາ ມີຫິຣິ ມີໂອດຕັບປະ ມີວິຣິຍະ ມີປັນຍາໃນກຸສົນທຳທັງຫຼາຍ ຕະຫຼອດຄືນວັນທີຜ່ານມາ ເຂົາຫວັງໄດ້ແຕ່ຄວາມຈະເລີນໃນກຸສົນທຳທັງຫຼາຍ ທີ່ນັ້ນ ຫວັງຄວາມເສື່ອມບໍ່ໄດ້ເລີຍ

ປຽບຄື ດວງຈັນຂ້າງຂຶ້ນ ມີແສງພຸດຜ່ອງ ເຕັມດວງ ມີຣັດສະໝີເຈີດຈ້າ ວັດຄວາມຍາວ ແລະຄວາມກວ້າງໄດ້ ຕະຫຼອດຄືນວັນທີຜ່ານມາ ອຸປະມານີ້ສັນໃດ ອຸປະໄມ ກໍສັນນັ້ນ ບຸກຄົນລາງຄົນມີສັດທາ ມີຫິຣິ ຯລຯ ມີໂອດຕັບປະ ຯລຯ ມີວິຣິຍະ ຯລຯ ມີປັນຍາໃນກຸສົນທຳທັງຫຼາຍ ຕະຫຼອດຄືນວັນທີຜ່ານມາ ເຂົາຫວັງໄດ້ແຕ່ຄວາມຈະເລີນໃນກຸສົນທຳທັງຫຼາຍທີ່ນັ້ນ ຫວັງຄວາມເສື່ອມບໍ່ໄດ້ເລີຍ

ຂໍ້ທີ່ບຸຣຸດບຸກຄົນມີສັດທານີ້ ບໍ່ເປັນຄວາມເສື່ອມ ຂໍ້ທີ່ບຸຣຸດບຸກຄົນມີຫິຣິນີ້ ບໍ່ເປັນຄວາມເສື່ອມ ຂໍ້ທີ່ບຸຣຸດບຸກຄົນມີໂອດຕັບປະນີ້ ບໍ່ເປັນຄວາມເສື່ອມ ຂໍ້ທີ່ບຸຣຸດບຸກຄົນ ຜາຣົບຄວາມພຽນນີ້ ບໍ່ເປັນຄວາມເສື່ອມ ຂໍ້ທີ່ບຸຣຸດບຸກຄົນມີປັນຍານີ້ ບໍ່ເປັນຄວາມເສື່ອມ ຂໍ້ທີ່ບຸຣຸດບຸກຄົນບໍ່ເປັນຜູ້ມັກໂກດນີ້ ບໍ່ເປັນຄວາມເສື່ອມ ຂໍ້ທີ່ບຸຣຸດບຸກຄົນ ບໍ່ຜູກໂກດນີ້ ບໍ່ເປັນຄວາມເສື່ອມ ຂໍ້ທີ່ມີພິກຂຸຜູ້ກ່າວສອນນີ້ ບໍ່ເປັນຄວາມເສື່ອມ

ດີແລ້ວ ດີແລ້ວ ກັດສະປະ ບຸກຄົນລາງຄົນບໍ່ມີສັດທາ ບໍ່ມີຫິຣິ ຯລຯ ບໍ່ມີໂອດຕັບປະ ຯລຯ ບໍ່ມີວິຣິຍະ ຯລຯ ບໍ່ມີປັນຍາໃນກຸສົນທຳທັງຫຼາຍ ຕະຫຼອດຄືນວັນທີຜ່ານມາ ເຂົາຫວັງໄດ້ແຕ່ຄວາມເສື່ອມໃນກຸສົນທຳທັງຫຼາຍທີ່ນັ້ນ ຫວັງຄວາມຈະເລີນບໍ່ໄດ້ເລີຍ

ປຽບຄື ດວງຈັນຂ້າງແຮມຍ່ອມອັບແສງ ບໍ່ເຕັມດວງ ຂາດຣັດສະໝີ ວັດຄວາມຍາວ ແລະຄວາມກວ້າງບໍ່ໄດ້ ຕະຫຼອດຄືນວັນທີຜ່ານມາ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ບຸກຄົນລາງຄົນບໍ່ມີສັດທາ ບໍ່ມີຫິຣິ ຯລຯ ບໍ່ມີໂອດຕັບປະ ຯລຯ ບໍ່ມີວິຣິຍະ ຯລຯ ບໍ່ມີປັນຍາໃນກຸສົນທຳທັງຫຼາຍ ຕະຫຼອດຄືນວັນທີຜ່ານມາ ເຂົາຫວັງໄດ້ແຕ່ຄວາມເສື່ອມໃນກຸສົນທຳທັງຫຼາຍທີ່ນັ້ນ ຫວັງຄວາມຈະເລີນບໍ່ໄດ້ເລີຍ

ຂໍ້ທີ່ບຸຣຸດບຸກຄົນບໍ່ມີສັດທານີ້ ເປັນຄວາມເສື່ອມ ຂໍ້ທີ່ບຸກຄົນບໍ່ມີຫິຣິ ຯລຯ ບໍ່ມີໂອດຕັບປະ ຯລຯ ເປັນຄົນຂີ້ຄ້ານ ຯລຯ ມີປັນຍາຊາມ ຯລຯ ມັກໂກດ ຯລຯ ຜູກໂກດ ຯລຯ ບໍ່ມີພິກຂຸຜູ້ກ່າວສອນນີ້ ເປັນຄວາມເສື່ອມ

ບຸກຄົນລາງຄົນມີສັດທາ ມີຫິຣິ ຯລຯ ມີໂອດຕັບປະ ຯລຯ ມີວິຣິຍະ ຯລຯ ມີປັນຍາໃນກຸສົນທຳທັງຫຼາຍ ຕະຫຼອດຄືນວັນທີຜ່ານມາ ເຂົາຫວັງໄດ້ແຕ່ຄວາມຈະເລີນໃນກຸສົນທຳທັງຫຼາຍທີ່ນັ້ນ ຫວັງຄວາມເສື່ອມບໍ່ໄດ້ເລີຍ

ປຽບຄື ດວງຈັນຂ້າງຂຶ້ນ ມີແສງພຸດຜ່ອງ ເຕັມດວງ ມີຣັດສະໝີເຈີດຈ້າ ວັດຄວາມຍາວແລະຄວາມກວ້າງໄດ້ ຕະຫຼອດຄືນວັນທີຜ່ານມາ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ບຸກຄົນລາງຄົນມີສັດທາ ມີຫິຣິ ຯລຯ ມີໂອດຕັບປະ ຯລຯ ມີວິຣິຍະ ຯລຯ ມີປັນຍາໃນກຸສົນທຳທັງຫຼາຍ ຕະຫຼອດຄືນວັນທີຜ່ານມາ ເຂົາຫວັງໄດ້ແຕ່ຄວາມຈະເລີນໃນກຸສົນທຳທັງຫຼາຍທີ່ນັ້ນ ຫວັງຄວາມເສື່ອມບໍ່ໄດ້ເລີຍ

ກັດສະປະ ຂໍ້ທີ່ບຸຣຸດບຸກຄົນມີສັດທານີ້ ບໍ່ເປັນຄວາມເສື່ອມ ຂໍ້ທີ່ບຸຣຸດບຸກຄົນ ມີຫິຣິ ຯລຯ ມີໂອດຕັບປະ ຯລຯ ຜາຣົບຄວາມພຽນ ຯລຯ ມີປັນຍາ ຯລຯ ບໍ່ເປັນຜູ້ມັກໂກດ ຯລຯ ບໍ່ຜູກໂກດ ຯລຯ ມີພິກຂຸຜູ້ກ່າວສອນນີ້ ບໍ່ເປັນຄວາມເສື່ອມ

**ທຸຕິຍະໂອວາທະສູດທີ ໗ ຈົບ**

# ໘. ຕະຕິຍະໂອວາທະສູດ

## ວ່າດ້ວຍການໃຫ້ໂອວາດ ສູດທີ ໘

[໑໕໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາຊະຄຶ

ຄັ້ງນັ້ນ ທ່ານພຣະມະຫາກັດສະປະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກໄດ້ຕັດກັບທ່ານພຣະມະຫາກັດສະປະດັ່ງນີ້ ວ່າ

ກັດສະປະ ທ່ານຈົ່ງກ່າວສອນພິກຂຸ ຈົ່ງສະແດງທຳມີກະຖາແກ່ພິກຂຸທັງຫຼາຍເທີ້ນ ເຮົາຫຼືທ່ານເພິ່ງກ່າວສອນ ເພິ່ງສະແດງທຳມີກະຖາແກ່ພິກຂຸທັງຫຼາຍ

ຂ້າແດ່ ພຣະອົງຜູ້ຈະເລີນ ໃນບັດນີ້ ພິກຂຸທັງຫຼາຍເປັນຜູ້ວ່າຍາກ ປະກອບດ້ວຍທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ ບໍ່ອົດທົນ ບໍ່ຮັບຄຳພ່ຳສອນໂດຍເຄົາລົບ

ກັດສະປະ ແມ່ນແນວນັ້ນ ໃນຄັ້ງກ່ອນ ພິກຂຸທັງຫຼາຍ ຜູ້ເປັນເຖຣະ ເປັນຜູ້ຢູ່ປ່າ ເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງການຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ເປັນຜູ້ນຸ່ງຫົ່ມຜ້າ ບັງສຸກຸນເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງການນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງການຊົງໄຕຣຈີວອນເປັນຂໍ້ວັດປະຕິບັດ ເປັນຜູ້ມັກໜ້ອຍ ແລະ ກ່າວສັນເສີນຄຸນແຫ່ງຄວາມມັກໜ້ອຍ ເປັນຜູ້ສັນໂດດ ແລະ ກ່າວສັນເສີນຄຸນແຫ່ງຄວາມສັນໂດດ ສະຫງັດຈາກໝູ່ ແລະ ກ່າວສັນເສີນຄຸນແຫ່ງຄວາມສະຫງັດຈາກໝູ່ ບໍ່ຄຸກຄີດ້ວຍໝູ່ ແລະ ກ່າວສັນເສີນຄຸນແຫ່ງຄວາມບໍ່ຄຸກຄີດ້ວຍໝູ່ ເປັນຜູ້ຜາຣົບຄວາມພຽນ ແລະ ກ່າວສັນເສີນຄຸນແຫ່ງການຜາຣົບຄວາມພຽນ

ບັນດາພິກຂຸເຫຼົ່ານັ້ນ ພິກຂຸອົງໃດ ເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງການຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ແລະກ່າວສັນເສີນຄຸນແຫ່ງການນຸ່ງຫົ່ມບັງສຸກຸນເປັນຂໍ້ວັດປະຕິບັດ ເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງການຊົງໄຕຣຈີວອນເປັນຂໍ້ວັດປະຕິບັດ ເປັນຜູ້ມັກໜ້ອຍ ແລະກ່າວສັນເສີນຄຸນແຫ່ງຄວາມມັກໜ້ອຍ ເປັນຜູ້ສັນໂດດ ແລະ ກ່າວສັນເສີນຄຸນແຫ່ງຄວາມສັນໂດດ ສະຫງັດຈາກໝູ່ ແລະ ກ່າວສັນເສີນຄຸນແຫ່ງຄວາມສະຫງັດຈາກໝູ່ ບໍ່ຄຸກຄີດ້ວຍໝູ່ ແລະກ່າວສັນເສີນ ຄຸນແຫ່ງຄວາມບໍ່ຄຸກຄີດ້ວຍໝູ່ ເປັນຜູ້ຜາຣົບຄວາມພຽນ ແລະ ກ່າວສັນເສີນຄຸນແຫ່ງການຜາຣົບຄວາມພຽນ ພິກຂຸທັງຫຼາຍ ຜູ້ເປັນເຖຣະຍ່ອມນິມົນທ່ານໃຫ້ນັ່ງດ້ວຍ ຄຳວ່າ ມາເທີ້ນພິກຂຸ ພິກຂຸຮູບນີ້ຊື່ຫຍັງ? ຈັ່ງແມ່ນຈະເລີນແທ້ນໍ ຕ້ອງການຕໍ່ການສຶກສາ ມາເທີ້ນ ພິກຂຸນີ້ອາສະນະ ນິມົນທ່ານນັ່ງເທີ້ນ

ເມື່ອພິກຂຸທັງຫຼາຍ ຜູ້ເປັນເຖຣະທຳສັກກາຣະແນວນັ້ນໃນພິກຂຸອົງນັ້ນ ພິກຂຸທັງຫຼາຍ ຜູ້ເປັນນະວະກະ ພາກັນຄິດວ່າ ຮູ້ວ່າ ພິກຂຸອົງນັ້ນ ເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ແລະກ່າວສັນເສີນຄຸນແຫ່ງການຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ຯລຯ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ຯລຯ ເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດປະຕິບັດ ຯລຯ ເປັນຜູ້ມັກໜ້ອຍ ຯລຯ ເປັນຜູ້ສັນໂດດ ຯລຯ ສະຫງັດຈາກໝູ່ ຯລຯ ບໍ່ຄຸກຄີດ້ວຍໝູ່ ຯລຯ ເປັນຜູ້ຜາຣົບຄວາມພຽນ ແລະ ກ່າວສັນເສີນຄຸນແຫ່ງການຜາຣົບຄວາມພຽນ ພິກຂຸທັງຫຼາຍຜູ້ເປັນເຖຣະຍ່ອມນິມົນໃຫ້ທ່ານນັ່ງ ດ້ວຍຄຳວ່າ ມາເທີ້ນພິກຂຸ ພິກຂຸຮູບນີ້ຊື່ຫຍັງ ຈັ່ງແມ່ນຈະເລີນແທ້ນໍ ຕ້ອງການຕໍ່ການສຶກສາ ມາເທີ້ນພິກຂຸ ນີ້ອາສະນະ ນິມົນທ່ານນັ່ງເທີ້ນ ພິກຂຸຜູ້ເປັນນະວະ

ກະເຫຼົ່ານັ້ນ ຍ່ອມປະຕິບັດເພື່ອຄວາມເປັນແນວນັ້ນ ຂໍ້ນັ້ນ ຍ່ອມມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກແກ່ທ່ານທັງຫຼາຍ ຕະຫຼອດການລະນານ

ໃນບັດນີ້ ພິກຂຸທັງຫຼາຍ ຜູ້ເປັນເຖຣະ ບໍ່ເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ແລະ ບໍ່ກ່າວສັນເສີນ ຄຸນແຫ່ງການຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ບໍ່ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ແລະບໍ່ກ່າວສັນເສີນ ຄຸນແຫ່ງການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ເປັນຜູ້ບໍ່ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ແລະ ບໍ່ກ່າວສັນເສີນຄຸນແຫ່ງການນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ເປັນຜູ້ບໍ່ຊົງໄຕຣຈີວອນເປັນຂໍ້ວັດປະຕິບັດ ແລະ ບໍ່ກ່າວສັນເສີນຄຸນແຫ່ງການຊົງໄຕຣຈີວອນເປັນຂໍ້ວັດປະຕິບັດ ບໍ່ເປັນຜູ້ມັກໜ້ອຍ ແລະ ບໍ່ກ່າວສັນເສີນຄຸນແຫ່ງຄວາມມັກໜ້ອຍ ບໍ່ເປັນຜູ້ສັນໂດດ ແລະບໍ່ກ່າວສັນເສີນຄຸນແຫ່ງຄວາມສັນໂດດ ບໍ່ເປັນຜູ້ສະຫງັດຈາກໝູ່ ແລະ ບໍ່ກ່າວສັນເສີນຄຸນແຫ່ງຄວາມສະຫງັດຈາກໝູ່ ເປັນຜູ້ຄຸກຄີດ້ວຍໝູ່ ແລະ ບໍ່ກ່າວສັນເສີນຄຸນແຫ່ງການບໍ່ຄຸກຄີດ້ວຍໝູ່ ບໍ່ຜາຣົບຄວາມພຽນ ແລະ ບໍ່ກ່າວສັນເສີນຄຸນແຫ່ງການຜາຣົບຄວາມພຽນ

ບັນດາພິກຂຸຜູ້ເປັນເຖຣະເຫຼົ່ານັ້ນ ພິກຂຸອົງໃດ ມີຊື່ສຽງ ມີຍົດ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ພິກຂຸທັງຫຼາຍຜູ້ເປັນເຖຣະຍ່ອມນິມົນໃຫ້ທ່ານນັ່ງດ້ວຍຄຳວ່າ ມາເທີ້ນພິກຂຸ ພິກຂຸຮູບນີ້ຊື່ຫຍັງ ຈັງແມ່ນຈະເລີນແທ້ນໍ ປາຖະໜາແຕ່ເພື່ອນສະພົມມະຈາຣີນຳກັນ ມາເທີ້ນພິກຂຸ ນີ້ອາສະນະ ນິມົນທ່ານນັ່ງເທີ້ນ

ເມື່ອພິກຂຸທັງຫຼາຍ ຜູ້ເປັນເຖຣະທຳສັກກາຣະແນວນັ້ນໃນພິກຂຸອົງນັ້ນ ພິກຂຸທັງຫຼາຍ ຜູ້ເປັນນະວະກະ ພາກັນຄິດວ່າ ຮູ້ວ່າ ພິກຂຸຮູບນີ້ມີຊື່ສຽງ ມີຍົດ ໄດ້ຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ ພິກຂຸທັງຫຼາຍ ຜູ້ເປັນເຖຣະພາກັນນິມົນໃຫ້ທ່ານນັ່ງດ້ວຍຄຳວ່າ ມາເທີ້ນພິກຂຸ ພິກຂຸຮູບນີ້ຊື່ຫຍັງ ຈັງແມ່ນຈະເລີນແທ້ນໍ ປາຖະໜາແຕ່ເພື່ອນ ສະພົມມະຈາຣີນຳກັນ ມາເທີ້ນພິກຂຸ ນີ້ອາສະນະ ນິມົນທ່ານນັ່ງເທີ້ນ ພິກຂຸຜູ້ເປັນນະວະກະເຫຼົ່ານັ້ນຍ່ອມປະຕິບັດເພື່ອຄວາມເປັນແນວນັ້ນ ຂໍ້ນັ້ນ ຍ່ອມມີເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອຄວາມທຸກແກ່ທ່ານທັງຫຼາຍ ຕະຫຼອດການລະນານ

ກັດສະປະ ແທ້ຈິງບຸກຄົນເມື່ອຈະກ່າວເຖິງຄົນໃດຄົນໜຶ່ງໃຫ້ຖືກຕ້ອງ ຄວນກ່າວວ່າ ຜູ້ປະພຶດພົມມະຈັນຖືກອັນຕະລາຍຂອງຜູ້ປະພຶດພົມມະຈັນບຽດບຽນແລ້ວ ຜູ້ປະພຶດພົມມະຈັນເຊິ່ງມີຄວາມປາຖະໜາເກີນປະມານ ຖືກຄວາມປາຖະໜາການປະພຶດພົມມະຈັນເກີນປະມານບຽດບຽນແລ້ວ ບັດນີ້ ບຸກຄົນເມື່ອຈະກ່າວເຖິງຄົນນັ້ນໃຫ້ຖືກຕ້ອງ ຄວນກ່າວວ່າ ຜູ້ປະພຶດພົມມະຈັນຖືກອັນຕະລາຍຂອງຜູ້ປະພຶດພົມມະຈັນບຽດບຽນແລ້ວ ຜູ້ປະພຶດພົມມະຈັນເຊິ່ງມີຄວາມປາຖະໜາເກີນປະມານ ຖືກຄວາມປາຖະໜາການປະພຶດພົມມະຈັນເກີນປະມານບຽດບຽນແລ້ວ

**ຕະຕິຍະໂອວາທະສູດທີ ໗ ຈົບ**

# ໙. ຊານາພິນຍະສູດ

## ວ່າດ້ວຍຊານແລະອະພິນຍາ

[໑໕໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ເຮົາສະຫງັດຈາກກາມແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ໄດ້ຕາບທໍ່ທີ່ເຮົາຕ້ອງການ ແມ່ນກັດສະປະກໍສະຫງັດຈາກກາມແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ໄດ້ຕາບທໍ່ທີ່ທ່ານຕ້ອງການຄືກັນ

ຍ້ອນວິຕົກວິຈານສະງົບລະງັບໄປ ເຮົາບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງໂປ່ໂລ່ຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ໄດ້ຕາບທໍ່ທີ່ເຮົາຕ້ອງການ ຍ້ອນວິຕົກ ວິຈານສະງົບລະງັບໄປ ແມ່ນກັດສະປະກໍບັນລຸທຸຕິຍະຊານ ຯລຯ ຢູ່ໄດ້ຕາບທໍ່ທີ່ທ່ານຕ້ອງການໄດ້ຄືກັນ

ຍ້ອນປີຕິຈາງຄາຍອອກ ເຮົາມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ ຜູ້ໄດ້ຊານນີ້ເປັນຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກໄດ້ ຕາບທໍ່ທີ່ເຮົາຕ້ອງການ ຍ້ອນປີຕິຈາງຄາຍອອກ ແມ່ນກັດສະປະເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ ຜູ້ໄດ້ຊານນີ້ເປັນຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກໄດ້ ຕາບທໍ່ທີ່ທ່ານຕ້ອງການໄດ້ຄືກັນ

ຍ້ອນລະສຸກແລະທຸກໄດ້ແລ້ວ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ເຮົາບັນລຸຈະຕຸດຖະຊານ ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາ ຢູ່ໄດ້ຕາບທໍ່ທີ່ເຮົາຕ້ອງການ ຍ້ອນລະສຸກແລະທຸກໄດ້ແລ້ວ ແມ່ນກັດສະປະກໍບັນລຸຈະຕຸດຖະຊານ ຯລຯ ຢູ່ໄດ້ ຕາບທໍ່ທີ່ທ່ານຕ້ອງການໄດ້ຄືກັນ

ເຮົາບັນລຸອາກາສານັນຈາຍະຕະນະ ດ້ວຍມະນະສິການວ່າ ອາກາດບໍ່ມີບ່ອນສຸດ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ມະນະສິການນານັດຕະສັນຍາໂດຍປະການທັງປວງ ຢູ່ໄດ້ຕາບທໍ່ທີ່ເຮົາຕ້ອງການ ແມ່ນກັດສະປະກໍບັນລຸອາກາສານັນຈາຍະຕະນະ ຯລຯ ຍ້ອນລ່ວງ ຮູບສັນຍາ ບໍ່ມະນະສິການໂດຍປະການທັງປວງ ຢູ່ໄດ້ຕາບທໍ່ທີ່ທ່ານຕ້ອງການໄດ້ຄືກັນ

ເຮົາບັນລຸວິນຍານັນຈາຍະຕະນະ ດ້ວຍມະນະສິການວ່າ ວິນຍານບໍ່ມີບ່ອນສຸດ ຍ້ອນລ່ວງອາກາສານັນຈາຍະຕະນະໂດຍປະການທັງປວງ ຢູ່ໄດ້ຕາມທີ່ທີ່ເຮົາຕ້ອງການ ແມ່ນກັດສະປະ ກໍບັນລຸວິນຍານັນຈາຍະຕະນະ ດ້ວຍມະນະສິການວ່າ ວິນຍານບໍ່ມີບ່ອນສຸດ ຍ້ອນລ່ວງອາກາສານັນຈາຍະຕະນະໂດຍປະການທັງປວງ ຢູ່ໄດ້ຕາມທີ່ທີ່ທ່ານຕ້ອງການໄດ້ຄືກັນ

ເຮົາບັນລຸອາກິນຈັນຍາຍະຕະນະ ດ້ວຍມະນະສິການວ່າ ອັນໃດໜ່ອຍໜຶ່ງກໍບໍ່ມີ ຍ້ອນລ່ວງວິນຍານັນຈາຍະຕະນະໂດຍປະການທັງປວງ ຢູ່ໄດ້ຕາມທີ່ທີ່ເຮົາຕ້ອງການ ແມ່ນກັດສະປະກໍບັນລຸ ຯລຯ ຢູ່ໄດ້ຕາມທີ່ທີ່ທ່ານຕ້ອງການໄດ້ຄືກັນ

ເຮົາບັນລຸເນວະສັນຍານາສັນຍາຍະຕະນະ ຍ້ອນລ່ວງອາກິນຈັນຍາຍະຕະນະໂດຍປະການທັງປວງ ຢູ່ໄດ້ຕາມທີ່ທີ່ເຮົາຕ້ອງການ ແມ່ນກັດສະປະກໍບັນລຸເນວະສັນຍານາສັນຍາຍະຕະນະ ຯລຯ ຢູ່ໄດ້ຕາມທີ່ທີ່ທ່ານຕ້ອງການໄດ້ຄືກັນ

ເຮົາບັນລຸສັນຍາເວທະຍິຕະນິໂຣດ ຍ້ອນລ່ວງເນວະສັນຍານາສັນຍາຍະຕະນະໂດຍປະການທັງປວງ ຢູ່ໄດ້ຕາມທີ່ທີ່ເຮົາຕ້ອງການ ແມ່ນກັດສະປະກໍບັນລຸສັນຍາເວທະຍິຕະນິໂຣດ ຯລຯ

ເຮົາສະແດງລິດໄດ້ຫຼາຍແບບ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ປາກົດກໍໄດ້ ຫຼື ໃຫ້ຫາຍໄປກໍໄດ້ ຊອດຝາກຳແພງ (ແລະ) ພູໄປໄດ້ບໍ່ຕິດຂັດ ຄືໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນ ຫຼື ມຸດລົງໃນແຜ່ນດິນຄືໄປໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກ ຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນ ດວງອາທິດອັນມີລິດຫຼາຍ ມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມໂລກກໍໄດ້ຕາມທີ່ທີ່ເຮົາຕ້ອງການ ແມ່ນກັດສະປະກໍສະແດງລິດໄດ້ຫຼາຍແບບ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມໂລກກໍໄດ້ ຕາມທີ່ທີ່ທ່ານຕ້ອງການໄດ້ຄືກັນ

ເຮົາໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບ ແລະ ສຽງມະນຸດ ທັງທີ່ຢູ່ໄກແລະໃກ້ດ້ວຍຫູທິບ ຯລຯ ໄດ້ຕາມທີ່ທີ່ເຮົາຕ້ອງການ ແມ່ນກັດສະປະກໍໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບແລະສຽງມະນຸດ ທັງທີ່ຢູ່ໄກແລະໃກ້ ຯລຯ

ເຮົາກຳນົດຮູ້ຈິດຂອງສັດແລະຄົນອື່ນດ້ວຍຈິດຂອງຕົນ ຄື ຈິດມີຣາຄະ ກໍຮູ້ວ່າຈິດມີຣາຄະ ຫຼື ຈິດປາສະຈາກຣາຄະ ກໍຮູ້ວ່າ ຈິດປາສະຈາກຣາຄະ ຈິດມີໂທສະ ຯລຯ ຈິດປາສະຈາກໂທສະ ຯລຯ ຈິດມີໂມຫະ ຯລຯ ຈິດປາສະຈາກໂມຫະ ຯລຯ ຈິດຫົດຫູ່ ຯລຯ ຈິດຟຸ້ງຊ່ານ ຯລຯ ຈິດເປັນມະຫັກຄະຕະ ຈິດບໍ່ເປັນມະຫັກຄະຕະ ຈິດມີຈິດອື່ນຍິ່ງກວ່າ ຯລຯ ຫຼື ຈິດບໍ່ມີຈິດອື່ນຍິ່ງກວ່າ ຯລຯ ຈິດເປັນສະມາທິ ຯລຯ ຈິດບໍ່ເປັນສະມາທິ ຯລຯ ຈິດລຸດພົ້ນ ຯລຯ ຫຼື ຈິດບໍ່ລຸດພົ້ນ ກໍຮູ້ວ່າຈິດບໍ່ລຸດພົ້ນໄດ້ຕາມທີ່ທີ່ເຮົາຕ້ອງການ ແມ່ນກັດສະປະກໍກຳນົດຮູ້ຈິດຂອງສັດ

ແລະຄົນອື່ນດ້ວຍຈິດຂອງຕົນ ຄືຈິດມີຣາຄະ ກໍຮູ້ວ່າຈິດມີຣາຄະ ຯລຯ ຫຼື ຈິດບໍ່ລຸດພົ້ນ ກໍຮູ້ວ່າຈິດບໍ່ລຸດພົ້ນຕາບທໍ່ທີ່ທ່ານຕ້ອງການ

ເຮົາຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດສັງວັດຕະວິວັດຕະກັບເປັນຈຳນວນຫຼາຍແດ່ວ່າ ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ເຮົາຈຸຕິຈາກພົບນັ້ນ ກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ເມື່ອຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້ ຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດ ດ້ວຍປະການຢ່າງນີ້ໄດ້ ແມ່ນກັດສະປະກໍຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ຯລຯ ຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດ ດ້ວຍປະການຢ່າງນີ້ໄດ້ທໍ່ທີ່ທ່ານຕ້ອງການ

ເຮົາເຫັນໝູ່ສັດເຊິ່ງກຳລັງຈຸຕິ ກຳລັງອຸບັດ ຊົ່ວ ປະນີດ ຜິວພັນດີ ຜິວພັນຊາມ ໄປດີ ຕົກຍາກ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ ຜູ້ຈະເລີນທັງຫຼາຍ ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ແລະ ຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຜິດ ພວກເຂົາຫຼັງຈາກ ຕາຍແລ້ວຈະໄປບັງເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ແຕ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກແລະຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວຈະໄປບັງເກີດໃນສຸກຄະຕິໂລກສະຫວັນ ເຮົາເຫັນໝູ່ສັດເຊິ່ງກຳລັງຈຸຕິ ກຳລັງອຸບັດ ຊົ່ວ ປະນີດ ຜິວພັນດີ ຜິວພັນຊາມ ໄປດີ ຕົກຍາກ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງໝູ່ສັດຜູ້ເປັນໄປຕາມກຳດ້ວຍ ປະການຢ່າງນີ້ໄດ້ ຕາບທໍ່ທີ່ເຮົາຕ້ອງການ ແມ່ນກັດສະປະກໍເຫັນໝູ່ສັດເຊິ່ງກຳລັງຈຸຕິ ກຳລັງອຸບັດ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຯລຯ ຮູ້ແຈ້ງໝູ່ສັດຜູ້ເປັນໄປຕາມກຳດ້ວຍປະການຢ່າງນີ້ ໄດ້ຕາບທໍ່ທີ່ທ່ານຕ້ອງການເຊັ່ນນັ້ນ

ພິກຂຸທັງຫຼາຍ ເຮົາຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນຫາອາສະວະບໍ່ໄດ້ ຍ້ອນອາສະວະທັງຫຼາຍສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ແມ່ນກັດສະປະກໍຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນຫາອາສະວະບໍ່ໄດ້ ຍ້ອນອາສະວະທັງຫຼາຍສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນໄດ້ຄືກັນ

**ຊານາພິນຍະສູດທີ ໗ ຈົບ**

# ໑໐. ອຸປັດສະຍະສູດ

## ວ່າດ້ວຍພຣະມະຫາກັດສະປະສະແດງທຳໃນສຳນັກພິກຂຸນີ

[໑໕໓] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ທ່ານພຣະມະຫາກັດສະປະພັກຢູ່ພຣະເຊຕະວັນ ອາຮາມຂອງອະນາຖະ ບິນທິກະເສດຖີ ເຂດເມືອງສາວັດຖີ ເມື່ອໃນເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກຖືບາດແລະຈີວອນ ເຂົ້າໄປຫາທ່ານພຣະມະຫາກັດສະປະຮອດບ່ອນຢູ່ ແລ້ວໄດ້ກ່າວກັບທ່ານພຣະມະຫາກັດສະປະດັ່ງນີ້ ວ່າ

ມາເທີ້ນທ່ານກັດສະປະຜູ້ຈະເລີນ ເຮົາຈັກໄປສູ່ສຳນັກຂອງພິກຂຸນີແຫ່ງໜຶ່ງ

ໄປເທີ້ນທ່ານອານົນ ທ່ານເປັນຜູ້ມີກິດຫຼາຍ ມີງານທີ່ຕ້ອງເຮັດຫຼາຍ

ແມ່ນເທື່ອທີ ໒ ທ່ານພຣະອານົນກໍໄດ້ກ່າວກັບທ່ານພຣະມະຫາກັດສະປະວ່າ ມາເທີ້ນທ່ານກັດສະປະຜູ້ຈະເລີນ ເຮົາຈັກໄປສູ່ສຳນັກຂອງພິກຂຸນີແຫ່ງໜຶ່ງ

ໄປເທີ້ນທ່ານອານົນ ທ່ານເປັນຜູ້ມີກິດຫຼາຍ ມີງານທີ່ຕ້ອງເຮັດຫຼາຍ

ແມ່ນເທື່ອທີ ໓ ທ່ານພຣະອານົນກໍໄດ້ກ່າວກັບທ່ານພຣະມະຫາກັດສະປະວ່າ ມາເທີ້ນທ່ານກັດສະປະຜູ້ຈະເລີນ ເຮົາຈັກໄປສູ່ສຳນັກຂອງພິກຂຸນີແຫ່ງໜຶ່ງ

ເມື່ອໃນເວລາເຊົ້າ ທ່ານພຣະມະຫາກັດສະປະຄອງອັນຕະຣະວາສົກຖືບາດແລະຈີວອນ ມີທ່ານພຣະອານົນຕິດຕາມ ເຂົ້າໄປສູ່ສຳນັກຂອງພິກຂຸນີແຫ່ງໜຶ່ງແລ້ວ ຈຶ່ງນັ່ງເທິງອາສະນະທີ່ເຂົາຈັດໄວ້ ລຳດັບນັ້ນ ພິກຂຸນີຈຳນວນຫຼາຍເຂົ້າໄປຫາທ່ານພຣະມະຫາກັດສະປະຮອດບ່ອນຢູ່ ຂາບທ່ານ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະມະຫາກັດສະປະໄດ້ຊີ້ແຈ່ງໃຫ້ພິກຂຸນີເຫຼົ່ານັ້ນເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮ່ຳໃຈໃຫ້ສົດຊື່ນແຈ່ມໃສ ດ້ວຍທຳມີກະຖາແລ້ວຈຶ່ງລຸກຈາກອາສະນະຫຼີກໄປ

ຄັ້ງນັ້ນ ພິກຂຸນີຊື່ຖຸນລະຕິດສາບໍ່ພໍໃຈ ຈຶ່ງເປ່ງວາຈາສະແດງຄວາມບໍ່ພໍໃຈວ່າ ຍ້ອນເຫດໃດນໍ ພຣະຜູ້ເປັນເຈົ້າມະຫາກັດສະປະຈຶ່ງສຳຄັນທຳທີ່ຕົນຄວນກ່າວຕໍ່ໜ້າ ພຣະອານົນຜູ້ເປັນເຈົ້າຜູ້ເປັນມຸນີປາດເປື່ອງ ປຽບຄືພໍ່ຄ້າເຂັມສຳຄັນວ່າ ຄວນຂາຍເຂັມໃນສຳນັກຂອງຊ່າງເຂັມ(ຜູ້ຊ່ຽວຊານ) ສັນໃດ ພຣະຜູ້ເປັນເຈົ້າມະຫາກັດສະປະຍ່ອມສຳຄັນທຳ ທີ່ຕົນຄວນກ່າວຕໍ່ໜ້າພຣະອານົນຜູ້ເປັນເຈົ້າ ຜູ້ເປັນມຸນີປາດເປື່ອງ ຄືກັນສັນນັ້ນ

ທ່ານພຣະມະຫາກັດສະປະໄດ້ຍິນພິກຂຸນີຊື່ຖຸນລະຕິດສາກຳລັງກ່າວວາຈານີ້ ຈຶ່ງໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ ທ່ານອານົນ ເຮົາເປັນພໍ່ຄ້າເຂັມ ທ່ານເປັນຊ່າງເຂັມ ຫຼື ເຮົາເປັນຊ່າງເຂັມ ທ່ານເປັນພໍ່ຄ້າເຂັມ

ຂໍປະທານໂທດທ່ານກັດສະປະຜູ້ຈະເລີນ ຊື່ວ່າ ມາຕຸຄາມເປັນຄົນຈ້ຳ

ຢຸດເທີ້ນ ທ່ານອານົນ ໝູ່ຂອງທ່ານຢ່າຟ້າວສະຫລຸບໄວໂພດ

ທ່ານອານົນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ທ່ານຖືກນຳເຂົ້າໄປປຽບທຽບໃນໝູ່ພິກຂຸສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າແດ່ບໍວ່າ ພິກຂຸທັງຫຼາຍ ເຮົາສະຫງັດຈາກກາມແລະຈາກອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານ ທີ່ມີວິຕົກວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ໄດ້ຕາບທໍ່ທີ່ເຮົາຕ້ອງການ ແມ່ນອານົນກໍສະຫງັດຈາກກາມແລະຈາກອະກຸສົນທຳທັງຫຼາຍ ບັນລຸປະຖົມຊານ ທີ່ມີວິຕົກວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ໄດ້ຕາບທໍ່ທີ່ທ່ານຕ້ອງການ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານຜູ້ມີອາຍຸ ຂ້ານ້ອຍເອງຖືກນຳເຂົ້າໄປປຽບໃນໝູ່ພິກຂຸ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ ພິກຂຸທັງຫຼາຍ ເຮົາສະຫງັດຈາກກາມ ແລະ ຈາກອະກຸສົນທຳທັງຫຼາຍບັນລຸປະຖົມຊານ ທີ່ມີວິຕົກວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ໄດ້ຕາບທໍ່ທີ່ເຮົາຕ້ອງການ ແມ່ນກັດສະປະກໍສະຫງັດຈາກກາມ ແລະ ຈາກອະກຸສົນທຳທັງຫຼາຍ ບັນລຸປະຖົມຊານ ຯລຯ ຢູ່ໄດ້ຕາບທໍ່ທີ່ທ່ານຕ້ອງການ

(ອະນຸປຸບພະວິຫາຣະສະມາບັດ ໗ ແລະອະພິນຍາ ໕ ມີ ຂໍ້ຄວາມທີ່ຫຍໍ້ໄວ້ ຢ່າງນີ້)

ທ່ານອານົນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ທ່ານຖືກນຳເຂົ້າໄປປຽບໃນໝູ່ພິກຂຸສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າແດ່ບໍວ່າ ພິກຂຸທັງຫຼາຍ ເຮົາເຮັດໃຫ້ແຈ້ງ ເຈໂຕວິມຸດຕິປັນຍາວິມຸດຕິອັນຫາອາສະວະບໍ່ໄດ້ ຍ້ອນອາສະວະທັງຫຼາຍສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ແມ່ນອານົນກໍເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນຫາອາສະວະບໍ່ໄດ້ຍ້ອນອາສະວະທັງຫຼາຍສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນຄືກັນ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານຜູ້ມີອາຍຸ ຂ້ານ້ອຍເອງຖືກນຳເຂົ້າໄປປຽບໃນໝູ່ພິກຂຸສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ ພິກຂຸທັງຫຼາຍ ເຮົາເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນຫາອາສະວະບໍ່ໄດ້

ຍ້ອນອາສະວະທັງຫຼາຍສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ແມ່ນກັດສະປະ ກໍເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນຫາອາສະວະບໍ່ໄດ້ ຍ້ອນອາສະວະທັງຫຼາຍສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນໄດ້ຄືກັນ

ທ່ານຜູ້ມີອາຍຸ ຜູ້ໃດສຳຄັນເຮົາວ່າຄວນປົກປິດໄດ້ດ້ວຍອະພິນຍາ ໖ ຜູ້ນັ້ນກໍຄວນສຳຄັນຊ້າງ ໗ ສອກ ຫຼື ໗ ສອກເຄິ່ງວ່າ ຈະເພິ່ງປົກປິດໄດ້ດ້ວຍໃບຕານ

ພິກຂຸນີຊື່ ຖຸນລະຕິດສາເຄື່ອນຈາກພົມມະຈັນແລ້ວ

**ອຸປັດສະຍະສູດທີ ໑໐ ຈົບ**

# ໑໑. ຈີວອນສູດ

## ວ່າດ້ວຍຈີວອນ

[໑໕໔] ສະໄໝໜຶ່ງ ທ່ານພຣະມະຫາກັດສະປະພັກຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາຊະຄືຶ ຄັ້ງນັ້ນ ທ່ານພຣະອານົນທ່ຽວຈາຣິກໄປໃນທັກຂິນາຄິຣີຊົນນະບົດ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່

ສະໄໝນັ້ນ ພິກຂຸທັງຫຼາຍ ຜູ້ເປັນສັດທິວິຫາຣິກຂອງທ່ານພຣະອານົນປະມານ ໓໐ ອົງ ສ່ວນຫຼາຍຍັງເປັນເດັກໜຸ່ມ ບອກຄືນສິກຂາກັບມາເປັນຄະຫຼືຫັດ ຄັ້ງນັ້ນ ທ່ານພຣະອານົນທ່ຽວຈາຣິກໄປຕາມພໍໃຈໃນທັກຂິນາຄິຣີຊົນນະບົດແລ້ວ ກັບມາຍັງພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາຊະຄືຶ ເຂົ້າໄປຫາທ່ານພຣະມະຫາກັດສະປະຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ທ່ານພຣະມະຫາກັດສະປະ ໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ ທ່ານອານົນ ພຣະຜູ້ມີພຣະພາກເຈົ້າຊົງອາໄສອຳນາດປະໂຫຍດທໍ່ໃດນໍ ຈຶ່ງຊົງບັນຍັດການຂົບສັນ ໓ ໝວດ ໃນຕະກູນທັງຫຼາຍໄວ້

ທ່ານກັດສະປະຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຊົງອາໄສອຳນາດປະໂຫຍດ ໓ ປະການ ຈຶ່ງໄດ້ຊົງບັນຍັດການຂົບສັນ ໓ ໝວດໃນຕະກູນທັງຫຼາຍໄວ້ ຄື

໑. ເພື່ອຂົ່ມບຸກຄົນຜູ້ດື້ດ້ານ
໒. ເພື່ອຄວາມຢູ່ຜາສຸກຂອງເຫຼົ່າພິກຂຸຜູ້ມີສິນດີງາມ

໓. ເພື່ອອະນຸເຄາະຕະກູນບໍ່ໃຫ້ເຫຼົ່າພິກຂຸຜູ້ມີຄວາມປາຖະໜາຊົ່ວ ອາໄສໝູ່ຄະນະທຳລາຍສົງໃຫ້ແຕກກັນ

ພຣະຜູ້ມີພຣະພາກເຈົ້າຊົງອາໄສອຳນາດປະໂຫຍດ ໓ ປະການນີ້ ຈຶ່ງຊົງບັນຍັດການຂົບສັນ ໓ ໝວດໃນຕະກູນທັງຫຼາຍໄວ້

ທ່ານອານົນ ເມື່ອເປັນແນວນີ້ ທ່ານທ່ຽວຈາຣິກໄປກັບພິກຂຸໃໝ່ເຫຼົ່ານີ້ ຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ ບໍ່ຮູ້ປະມານໃນໂພຊະນະ ບໍ່ປະກອບຄວາມພຽນເຄື່ອງຕື່ນຢູ່ ເພື່ອປະໂຫຍດອັນໃດນໍ? ທ່ານທ່ຽວໄປຢຽບເຂົ້າກ້າ ຄົງຈະທ່ຽວໄປບຽດບຽນຕະກູນ ບໍລິສັດຂອງທ່ານເບິ່ງມີໜ້ອຍລົງ ສັດທິວິຫາຣິກຂອງທ່ານເຊິ່ງສ່ວນຫຼາຍເປັນຜູ້ໃໝ່ໄດ້ກະຈັດກະຈາຍໄປ ທ່ານນີ້ຍັງເປັນເດັກນ້ອຍ ບໍ່ຮູ້ຈັກປະມານ

ທ່ານກັດສະປະຜູ້ຈະເລີນ ເສັ້ນຜົມທັງຫຼາຍເທິງຫົວຂອງຂ້ານ້ອຍຫງອກແລ້ວກໍຈິງຢ່າງໃດກໍ່ຕາມແມ່ນໃນມື້ນີ້ ພວກຂ້ານ້ອຍກໍຍັງບໍ່ພົ້ນຈາກການກ່າວວ່າ ເປັນເດັກນ້ອຍ

ແມ່ນແນວນັ້ນ ທ່ານອານົນ ທ່ານທ່ຽວຈາຣິກໄປກັບພິກຂຸໃໝ່ເຫຼົ່ານີ້ ຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ ບໍ່ຮູ້ປະມານໃນໂພຊະນະ ບໍ່ປະກອບຄວາມພຽນເຄື່ອງຕື່ນຢູ່ ທ່ານທ່ຽວໄປຢຽບເຂົ້າກ້າ ຄົງຈະທ່ຽວໄປບຽດບຽນຕະກູນ ບໍລິສັດຂອງທ່ານເບິ່ງມີໜ້ອຍລົງ ສັດທິວິຫາຣິກຂອງທ່ານເຊິ່ງສ່ວນຫຼາຍເປັນຜູ້ໃໝ່ໄດ້ກະຈັດກະຈາຍໄປ ທ່ານນີ້ຍັງເປັນເດັກນ້ອຍ ບໍ່ຮູ້ຈັກປະມານ

ພິກຂຸນີຊື່ ຖຸນລະນັນທາໄດ້ຍິນແລ້ວຄິດວ່າ ຮູ້ວ່າພຣະອານົນຜູ້ເປັນເຈົ້າ ຜູ້ເປັນມຸນີປາດເປື່ອງ ຖືກພຣະຜູ້ເປັນເຈົ້າມະຫາກັດສະປະຮຸກຮານດ້ວຍການກ່າວວ່າ ເປັນເດັກນ້ອຍ

ຄັ້ງນັ້ນ ພິກຂຸນີຊື່ ຖຸນລະນັນທາບໍ່ພໍໃຈ ຈຶ່ງເປ່ງວາຈາສະແດງຄວາມບໍ່ພໍໃຈວ່າ ພຣະຜູ້ເປັນເຈົ້າມະຫາກັດສະປະເຄີຍເປັນອັນຍະເດຍຣະຖີ ຈຶ່ງສຳຄັນພຣະຜູ້ເປັນເຈົ້າອານົນ ຜູ້ເປັນມຸນີປາດເປື່ອງວ່າ ຄວນຮຸກຮານດ້ວຍການກ່າວວ່າ ເປັນເດັກນ້ອຍ ທ່ານພຣະມະຫາກັດສະປະໄດ້ຍິນພິກຂຸນີ ຊື່ຖຸນລະນັນທາກ່າວວາຈານີ້ແລ້ວ

ລຳດັບນັ້ນ ທ່ານພຣະມະຫາກັດສະປະ ຈຶ່ງໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ ຖ້າຈັ່ງຊັ້ນແລ້ວ ທ່ານອານົນ ພິກຂຸນີຊື່ ຖຸນລະນັນທາເວົ້າແບບຮີບຟ້າວໂພດ ບໍ່ທັນພິຈາລະນາ ຍ້ອນເຮົາແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ບໍ່ຮູ້ເລີຍວ່າເຮົາ ອອກຈາກເຮືອນບວດເປັນບັນຊິດອຸທິດສາດສະດາອື່ນ ນອກຈາກພຣະຜູ້ມີພຣະພາກອະຣະຫັນຕະສຳມາ ສຳພຸດທະເຈົ້າພຣະອົງນັ້ນ ແຕ່ກ່ອນ ເຮົາເປັນຄະຫຼືຫັດໄດ້ມີຄວາມຄິດວ່າ ຄະຣາວາດຄັບແຄບ ເປັນທາງມາແຫ່ງທຸລີ ບັນພະຊາປອດໂປ່ງ ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນ

ໃຫ້ບໍລິສຸດບໍລິບູນໂດຍສ່ວນດຽວຄືຫອຍສັງທີ່ຂັດແລ້ວ ບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີເຮົາຄວນແຖ ຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ສະໄໝຕໍ່ມາ ເຮົາໄດ້ເຮັດສັງຄາຕິດ້ວຍຜ້າເກົ່າ ແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ອຸທິດສະເພາະທ່ານຜູ້ເປັນພຣະອະຣະຫັນໃນໂລກ

ຂ້ານ້ອຍນັ້ນ ເມື່ອບວດແລ້ວຂະນະທີ່ເດີນທາງໄກ ໄດ້ພົບພຣະຜູ້ມີພຣະພາກເຈົ້າເຊິ່ງປະທັບນັ່ງຢູ່ທີ່ພະຫຸປຸດຕະເຈດີ ລະຫວ່າງເມືອງຣາຊະຄືກັບບ້ານນາລັນທາ ເມື່ອພົບແລ້ວຂ້ານ້ອຍໄດ້ມີຄວາມຄິດວ່າ ເຮົາພົບພຣະສາດສະດາ ກໍເປັນອັນພົບພຣະຜູ້ມີພຣະພາກເຈົ້າດ້ວຍ ເຮົາພົບພຣະສຸຄົດ ກໍເປັນອັນພົບພຣະຜູ້ມີພຣະພາກເຈົ້າດ້ວຍ ເຮົາພົບພຣະສໍາມາສໍາພຸດທະເຈົ້າ ກໍເປັນອັນພົບພຣະຜູ້ມີພຣະພາກເຈົ້າດ້ວຍ ທ່ານຜູ້ມີອາຍຸ ຂ້ານ້ອຍນັ້ນ ໄດ້ນ້ອມຫົວລົງແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ໃນບ່ອນນັ້ນເອງ ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ເປັນສາດສະດາຂອງ ຂ້າພຣະອົງ ຂ້າພຣະອົງເປັນສາວົກ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

## ປະທານໂອວາດ ໓ ປະການ

ເມື່ອຂ້ານ້ອຍກຣາບທູນ ຢ່າງນີ້ແລ້ວ ພຣະຜູ້ມີພຣະພາກໄດ້ຕັດກັບຂ້ານ້ອຍວ່າ ກັດສະປະ ຜູ້ໃດຍັງບໍ່ຮູ້ຈັກສາວົກຜູ້ສົມບູນດ້ວຍຈິດບໍລິສຸດ ຢ່າງນີ້ແລ້ວພຶງເວົ້າວ່າ ຮູ້ ຍັງບໍ່ເຫັນ ເພິ່ງເວົ້າວ່າ ເຫັນ ແມ່ນຫົວຂອງຜູ້ນັ້ນເພິ່ງແຕກ ແຕ່ເຮົາຮູ້ຢູ່ ຈຶ່ງເວົ້າວ່າ ຮູ້ ເຫັນຢູ່ ຈຶ່ງເວົ້າວ່າ ເຫັນ

ຍ້ອນເຫດນັ້ນແລ ກັດສະປະ ທ່ານເພິ່ງສຶກສາແນວນີ້ວ່າ ເຮົາຈັກເຂົ້າໄປຕັ້ງຫິຣິແລະໂອດຕັບປະຢ່າງແຮງກ້າໃນພິກຂຸທັງຫຼາຍ ຜູ້ເປັນເຖຣະ ຜູ້ເປັນນະວະກະ ຜູ້ເປັນມັດຊິມະ ທ່ານເພິ່ງສຶກສາແນວນີ້

ຍ້ອນເຫດນັ້ນ ກັດສະປະ ທ່ານເພິ່ງສຶກສາແນວນີ້ວ່າ ເຮົາຈັກຟັງທໍາແນວໃດແນວໜຶ່ງເຊິ່ງປະກອບດ້ວຍກຸສົນ ຈັກເຮັດທໍານັ້ນທັງໝົດໃຫ້ເປັນປະໂຫຍດ ມະນະສິການເຖິງທໍານັ້ນທັງໝົດ ຈັກປະມວນຈິດມາທັງໝົດ ງ່ຽງໂສດສະດັບທໍາ ທ່ານເພິ່ງສຶກສາດັ່ງນີ້

ຍ້ອນເຫດນັ້ນແລ ກັດສະປະ ທ່ານເພິ່ງສຶກສາແນວນີ້ວ່າ ເຮົາຈັກບໍ່ລະກາຍະຄະຕາສະຕິທີ່ປະກອບດ້ວຍຄວາມຍິນດີ ທ່ານເພິ່ງສຶກສາແນວນີ້

ພຣະຜູ້ມີພຣະພາກເຈົ້າ ຊົງໂອວາດຂ້ານ້ອຍດ້ວຍພຣະໂອວາດນີ້ແລ້ວ ສະເດັດລຸກຈາກອາສະນະ ຫຼີກໄປ ຂ້ານ້ອຍ ເປັນໜີ້ ບໍຣິໂພກກ້ອນເຂົ້າຂອງລາດຊະດອນເຖິງອາທິດໜຶ່ງ ວັນທີ ໘ ອະຣະຫັດຕະຜົນ ຈຶ່ງເກີດຂຶ້ນ ເວລານັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດລົງຈາກທາງໄປສູ່

ເຫງົ້າຕົ້ນໄມ້ແຫ່ງໜຶ່ງ ຂ້ານ້ອຍຈຶ່ງປູລາດຜ້າສັງຄາຕິທີ່ເຮັດດ້ວຍຜ້າເກົ່າຕັກເປັນ ໔ ຊັ້ນຖວາຍ ແລ້ວຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງປະທັບນັ່ງເທິງຜ້າຜືນ ນີ້ ເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກແກ່ຂ້າພຣະອົງຕະຫຼອດການລະນານເທີ້ນ ພຣະຜູ້ ມີພຣະພາກເຈົ້າກໍປະທັບນັ່ງເທິງ ອາສະນະທີ່ຂ້ານ້ອຍຈັດຖວາຍ ແລ້ວຕັດກັບຂ້ານ້ອຍວ່າ ກັດສະ ປະ ສັງຄາຕິທີ່ເຮັດດ້ວຍຜ້າເກົ່າຂອງທ່ານຜືນນີ້ອ່ອນນຸ່ມ ຂ້ານ້ອຍກໍຂາບທູນວ່າ ຂ້າແດ່ ພຣະອົງ ຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໄດ້ໂຜດ ອະນຸເຄາະ ຊົງຮັບສັງຄາຕິທີ່ເຮັດດ້ວຍຜ້າເກົ່າຂອງ ຂ້າພຣະອົງເທີ້ນ ພຣະອົງຕັດວ່າ ທ່ານຈັກຊົງຜ້າປ່ານບັງສຸກຸນຂອງເຮົາທີ່ໃຊ້ສອຍແລ້ວບໍ? ຂ້າ ນ້ອຍກໍຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກຊົງຜ້າປ່ານບັງສຸກຸນທີ່ໃຊ້ສອຍ ແລ້ວຂອງພຣະຜູ້ມີພຣະພາກເຈົ້າ ຂ້ານ້ອຍ ໄດ້ຖວາຍຜ້າສັງຄາຕິທີ່ເຮັດດ້ວຍຜ້າເກົ່າແດ່ ພຣະຜູ້ ມີພຣະພາກເຈົ້າ ແລະ ໄດ້ຮັບຜ້າປ່ານບັງສຸກຸນທີ່ໃຊ້ສອຍແລ້ວຂອງພຣະຜູ້ມີພຣະພາກເຈົ້າມາ

ແທ້ຈິງ ບຸກຄົນເມື່ອຈະກ່າວເຖິງຄົນໃດຄົນໜຶ່ງໃຫ້ຖືກຕ້ອງ ຄວນກ່າວວ່າ ບຸດຂອງພຣະ ຜູ້ມີພຣະພາກເຈົ້າເປັນຜູ້ເກີດແຕ່ອົກ ເກີດແຕ່ປາກ ເກີດແຕ່ພຣະທຳ ອັນພຣະທຳເນຣະມິດແລ້ວ ເປັນທຳທາຍາດ ຈຶ່ງຮັບຜ້າປ່ານບັງສຸກຸນທີ່ໃຊ້ສອຍແລ້ວ ບຸກຄົນເມື່ອຈະ ກ່າວເຖິງຄົນນັ້ນໃຫ້ຖືກ ຕ້ອງ ຄວນກ່າວກັບຂ້ານ້ອຍວ່າ ບຸດຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ເກີດ ແຕ່ອົກ ເກີດແຕ່ ປາກ ເກີດແຕ່ພຣະທຳ ອັນພຣະທຳເນຣະມິດແລ້ວ ເປັນທຳທາຍາດ ໄດ້ຮັບຜ້າປ່ານບັງສຸກຸນທີ່ ໃຊ້ສອຍແລ້ວ

ຂ້ານ້ອຍ ສະຫງັດຈາກກາມແລະຈາກອະກຸສົນທຳທັງຫຼາຍ ບັນລຸປະຖົມຊານ ທີ່ມີວິຕົກ ວິຈານ ປີຕິແລະສຸກ ອັນເກີດຈາກວິເວກຢູ່ທໍ່ທີ່ຂ້ານ້ອຍຕ້ອງການ ຂ້ານ້ອຍ ຯລຯ ທໍ່ທີ່ຂ້ານ້ອຍ ຕ້ອງການ

(ອະນຸປຸບພະວິຫາຣະສະມາບັດ ໙ ແລະ ອະພິນຍາ ໕ ມີຂໍ້ຄວາມທີ່ຫຍໍ້ໄວ້ແບບນີ້)

ທ່ານຜູ້ມີອາຍຸ ຂ້ານ້ອຍເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນຫາອາສະວະບໍ່ໄດ້ ຍ້ອນອາສະວະທັງຫຼາຍສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຜູ້ໃດສຳຄັນ ຂ້າ ນ້ອຍວ່າ ຄວນປົກປິດໄດ້ດ້ວຍອະພິນຍາ ໖ ຜູ້ນັ້ນ ກໍຄວນສຳຄັນຊ້າງ ໗ ສອກ ຫຼື ໗ ສອກເຄິ່ງ ວ່າຈະເພິ່ງປົກປິດໄດ້ດ້ວຍໃບຕານ

ພິກຂຸນີຊື່ ຖຸນລະນັນທາເຄື່ອນຈາກພົມມະຈັນແລ້ວ

**ຈີວອນສູດທີ່ ໑໑ ຈົບ**

# ໑໔. ປະຣຳມະຣະນະສູດ

## ວ່າດ້ວຍຕະຖາຄົດຕາຍໄປແລ້ວເກີດອີກຫຼືບໍ່ເກີດ

[໑໕໕] ສະໄໝໜຶ່ງ ທ່ານພຣະມະຫາກັດສະປະ ແລະ ທ່ານພຣະສາຣີບຸດພັກຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດເມືອງພາຣານະສີ ຄັ້ງນັ້ນ ທ່ານພຣະສາຣີບຸດອອກຈາກທີ່ຫຼີບຫຼີກໃນເວລາຄ່ຳເຂົ້າໄປຫາທ່ານພຣະມະຫາກັດສະປະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ເມື່ອທ່ານພຣະສາຣີບຸດນັ່ງຮຽບຮ້ອຍແລ້ວ ໄດ້ຖາມທ່ານພຣະມະຫາກັດສະປະດັ່ງນີ້ ວ່າ

ທ່ານກັດສະປະ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແມ່ນບໍ?

ທ່ານຜູ້ມີອາຍຸ ຂໍ້ທີ່ວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກນັ້ນ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຊົງພະຍາກອນໄວ້

ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກແມ່ນບໍ?

ແມ່ນຂໍ້ທີ່ວ່າ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກນັ້ນ ພຣະຜູ້ມີພຣະພາກເຈົ້າກໍບໍ່ໄດ້ຊົງພະຍາກອນໄວ້

ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກແມ່ນບໍ?

ຂໍ້ທີ່ວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກນັ້ນ ພຣະຜູ້ມີພຣະພາກເຈົ້າກໍບໍ່ໄດ້ຊົງພະຍາກອນໄວ້

ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນບໍ?

ແມ່ນຂໍ້ທີ່ວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນນັ້ນ ພຣະຜູ້ມີພຣະພາກເຈົ້າກໍບໍ່ໄດ້ຊົງພະຍາກອນໄວ້

ຍ້ອນເຫດໃດ ຂໍ້ທີ່ກ່າວເຖິງນັ້ນ ໆ ພຣະຜູ້ມີພຣະພາກເຈົ້າ ຈຶ່ງບໍ່ໄດ້ຊົງພະຍາກອນໄວ້

ຍ້ອນຂໍ້ນັ້ນ ບໍ່ມີປະໂຫຍດ ບໍ່ເປັນເບື້ອງຕົ້ນແຫ່ງການປະພຶດພົມມະຈັນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງບໍ່ໄດ້ຊົງພະຍາກອນໄວ້

ຖ້າເຊັ່ນນັ້ນ ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນໄວ້ແນວໃດນໍ?

ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນໄວ້ວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ[១]

ຍ້ອນເຫດໃດ ຂໍ້ນີ້ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງພະຍາກອນໄວ້

ທ່ານຜູ້ມີອາຍຸ ຍ້ອນຂໍ້ນັ້ນມີປະໂຫຍດ ເປັນເບື້ອງຕົ້ນແຫ່ງການປະພຶດພົມມະຈັນ ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງພະຍາກອນໄວ້

**ປະຣຳມະຣະນະສູດທີ ໑໔ ຈົບ**

# ໑໕. ສັດທຳມັບປະຕິຣູປະກະສູດ

## ວ່າດ້ວຍສັດທຳປະຕິຣູປະ

[໑໕໖] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ທ່ານພຣະມະຫາກັດສະປະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດ ເປັນປັດໄຈໃຫ້ ແຕ່ກ່ອນສິກຂາບົດ ມີໜ້ອຍ ພິກຂຸຜູ້ຕັ້ງຢູ່ໃນອະຣະຫັດຕະຜົນມີຫຼາຍ ແລະ ອັນໃດນໍ? ເປັນເຫດ ເປັນປັດໄຈໃຫ້ ບັດນີ້ ສິກຂາບົດມີຫຼາຍ ແຕ່ພິກຂຸຕັ້ງຢູ່ໃນອະຣະຫັດຕະຜົນມີໜ້ອຍ

ກັດສະປະ ຂໍ້ນັ້ນເປັນແນວນີ້ ຄື ເມື່ອໝູ່ສັດເສື່ອມລົງ ສັດທຳກໍເສື່ອມສູນໄປ ສິກຂາບົດຈຶ່ງມີຫຼາຍ ແລະພິກຂຸຕັ້ງຢູ່ໃນອະຣະຫັດຕະຜົນຈຶ່ງມີໜ້ອຍ ສັດທຳປະຕິຣູປະຍັງບໍ່ເກີດຂຶ້ນໃນໂລກຕາບໃດ ຕາບນັ້ນ ສັດທຳກໍຍັງບໍ່ເສື່ອມສູນໄປ ແຕ່ເມື່ອໃດສັດທຳປະຕິຣູປະເກີດຂຶ້ນໃນໂລກ ເມື່ອນັ້ນສັດທຳຍ່ອມເສື່ອມສູນໄປ

ຄຳປອມຍັງບໍ່ເກີດຂຶ້ນໃນໂລກຕາບໃດ ຕາບນັ້ນຄຳແທ້ກໍຍັງບໍ່ຫາຍໄປ ແລະເມື່ອໃດຄຳປອມເກີດຂຶ້ນໃນໂລກ ເມື່ອນັ້ນ ຄຳແທ້ຈຶ່ງຫາຍໄປສັນໃດ ສັດທຳ ປະຕິຣູປະຍັງບໍ່ເກີດຂຶ້ນໃນ

ໂລກຕາບໃດ ຕາບນັ້ນສັດທຳກໍຍັງບໍ່ເສື່ອມສູນໄປ ແຕ່ເມື່ອໃດສັດທຳປະຕິຮູປະເກີດຂຶ້ນໃນໂລກ ເມື່ອນັ້ນສັດທຳຍ່ອມເສື່ອມສູນໄປ ຄືກັນສັນນັ້ນ

ປະຖະວີທາດ (ທາດດິນ) ເຮັດສັດທຳໃຫ້ເສື່ອມສູນໄປບໍ່ໄດ້ ອາໂປທາດ (ທາດນ້ຳ) ເຕໂຊທາດ (ທາດໄຟ) ວາໂຍທາດ (ທາດລົມ) ກໍເຮັດສັດທຳໃຫ້ເສື່ອມສູນໄປບໍ່ໄດ້ ແຕ່ພວກໂມຄະບຸຣຸດໃນໂລກນີ້ ຕ່າງຫາກເກີດຂຶ້ນມາຍ່ອມເຮັດໃຫ້ສັດທຳເສື່ອມສູນໄປ ປຽບຄື ເຮືອຈະອັບປາງກໍຍ້ອນຕົ້ນທຶນທີ່ນັ້ນ ສັດທຳຍ່ອມບໍ່ເສື່ອມສູນໄປ ດ້ວຍປະການຢ່າງນີ້

## ສາເຫດທີ່ເຮັດໃຫ້ສັດທຳເສື່ອມສູນ

ເຫດຝ່າຍຕ່ຳ ໕ ປະການນີ້ ເປັນໄປເພື່ອຄວາມເລືອນຫາຍ ເພື່ອຄວາມເສື່ອມສູນໄປແຫ່ງສັດທຳ ເຫດຝ່າຍຕ່ຳ ໕ ປະການອັນໃດແດ່ ຄື

໑. ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ໃນທຳວິໄນນີ້ ບໍ່ເຄົາລົບຢຳເກງໃນ ພຣະສາດສະດາ
໒. ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ໃນທຳວິໄນນີ້ ບໍ່ເຄົາລົບຢຳເກງໃນ ພຣະທຳ
໓. ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ໃນທຳວິໄນນີ້ ບໍ່ເຄົາລົບຢຳເກງໃນ ພຣະສົງ
໔. ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ໃນທຳວິໄນນີ້ ບໍ່ເຄົາລົບຢຳເກງໃນ ສິກຂາ
໕. ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ໃນທຳວິໄນນີ້ ບໍ່ເຄົາລົບຢຳເກງໃນ ສະມາທິ

ເຫດຝ່າຍຕ່ຳ ໕ ປະການນີ້ ເປັນໄປເພື່ອຄວາມເລືອນຫາຍ ເພື່ອຄວາມເສື່ອມສູນໄປແຫ່ງສັດທຳ

## ສາເຫດທີ່ເຮັດໃຫ້ສັດທຳຕັ້ງໝັ້ນ

ກັດສະປະ ເຫດ ໕ ປະການນີ້ ເປັນໄປເພື່ອຄວາມຕັ້ງໝັ້ນ ເພື່ອຄວາມບໍ່ເລືອນຫາຍ ເພື່ອຄວາມບໍ່ເສື່ອມສູນໄປແຫ່ງສັດທຳ ເຫດ ໕ ປະການອັນໃດແດ່ ຄື

໑. ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ໃນທຳວິໄນນີ້ ມີຄວາມເຄົາລົບ ຢຳເກງໃນພຣະສາດສະດາ
໒. ພິກຂຸ ພິກຂຸນີ ຯລຯ ຢຳເກງໃນ ພຣະທຳ
໓. ພິກຂຸ ພິກຂຸນີ ຯລຯ ຢຳເກງໃນ ພຣະສົງ
໔. ພິກຂຸ ພິກຂຸນີ ຯລຯ ຢຳເກງໃນ ສິກຂາ
໕. ພິກຂຸ ພິກຂຸນີ ຯລຯ ຢຳເກງໃນ ສະມາທິ

ເຫດ ໕ ປະການນີ້ ເປັນໄປເພື່ອຄວາມຕັ້ງໝັ້ນ ເພື່ອຄວາມບໍ່ເລືອນຫາຍ ເພື່ອຄວາມບໍ່ເສື່ອມສູນໄປແຫ່ງສັດທຳ

**ສັດທຳມັບປະຕິຣູປະກະສູດທີ ໑໓ ຈົບ**

**ກັດສະປະສັງຍຸດ ຈົບບໍລິບູນ**

## ລວມພຣະສູດທີ່ມີໃນສັງຍຸດນີ້ ຄື

໑. ສັນຕຸດຖະສູດ
໒. ຈັນທູປະມາສູດ
໓. ຊິນນະສູດ
໔. ທຸຕິຍະໂອວາທະສູດ
໕. ຊານາພິນຍະສູດ
໖. ອະໂນດຕັບປີສູດ
໗. ກຸລູປະກະສູດ
໘. ໂອວາທະສູດ
໙. ຕະຕິຍະໂອວາທະສູດ
໑໐. ອຸປັດສະຍະສູດ
໑໑. ຈີວອນສູດ
໑໒. ປະຣຳມະຣະນະສູດ
໑໓. ສັດທຳມັບປະຕິຣູປະກະສູດ

# ຜ. ລາບສັກກາຣະສັງຍຸດ

## ໑. ປະຖົມວັກ

### ໝວດທີ ໑

## ໑. ທາຣຸນະສູດ

### ວ່າດ້ວຍລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ

[໑໕໗] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ລາບ ສັກກາຣະ ແລະ ຄວາມສັນເສີນ ປັນສິ່ງທາລຸນ ເຜັດຮ້ອນ ຫຍາບຄາຍ ເປັນອັນຕະລາຍຕໍ່ການບັນລຸທຳອັນກະເສມຈາກໂຍຄະ ເຊິ່ງບໍ່ມີທຳອື່ນຍິ່ງກວ່າ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍຈັກລະລາບສັກກາຣະ ແລະ ຄວາມສັນເສີນທີ່ເກີດຂຶ້ນ ລາບສັກກາຣະແລະຄວາມສັນເສີນທີ່ເກີດຂຶ້ນແລ້ວ ຈັກບໍ່ຄອບງຳຈິດຂອງເຮົາທັງຫຼາຍຕັ້ງຢູ່ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ທາຣຸນະສູດທີ ໑ ຈົບ**

## ໔. ພະລິສະສູດ

### ວ່າດ້ວຍລາບສັກກາຣະແລະຄວາມສັນເສີນປຽບຄືເບັດ

[໑໕໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະ ແລະ ຄວາມສັນເສີນເປັນສິ່ງທາລຸນ ເຜັດຮ້ອນ ຫຍາບຄາຍ ເປັນອັນຕະລາຍຕໍ່ການບັນລຸທຳອັນກະເສມຈາກໂຍຄະ ເຊິ່ງບໍ່ມີທຳອື່ນ ຍິ່ງກວ່າ ປຽບຄື

ປາບາງໂຕເຫັນແກ່ເຫຍື່ອ ກືນກິນເບັດທີ່ກ່ຽວເຫຍື່ອ ອັນພານເບັດຢ່ອນລົງໃນແມ່ນ້ຳເລິກ ມັນກືນກິນເບັດຂອງພານເບັດ ຢ່າງນີ້ແລ້ວໄດ້ຮັບທຸກ ເຖິງຄວາມພິນາດ ຖືກພານເບັດເຮັດໄດ້ຕາມໃຈປາຖະໜາສັນນັ້ນ

ຄຳວ່າ ພານເບັດ ນີ້ ເປັນຊື່ຂອງມານໃຈບາບ ຄຳວ່າ ເບັດ ນີ້ ເປັນຊື່ຂອງລາບ ສັກກາຣະແລະຄວາມສັນເສີນ ພິກຂຸລາງອົງຍິນດີ ພໍໃຈລາບສັກກາຣະແລະຄວາມສັນເສີນ ທີ່ເກີດຂຶ້ນແລ້ວ ພິກຂຸນີ້ ເຮົາກ່າວວ່າ ກືນກິນເບັດຂອງມານ ໄດ້ຮັບທຸກ ເຖິງຄວາມພິນາດ ຖືກມານໃຈບາບເຮັດໄດ້ຕາມໃຈປາຖະໜາ

ພິກຂຸທັງຫຼາຍ ລາບສັກກາຣະ ແລະ ຄວາມສັນເສີນເປັນສິ່ງທາລຸນ ເຜັດຮ້ອນ ຫຍາບຄາຍ ເປັນອັນຕະລາຍຕໍ່ການບັນລຸທຳອັນກະເສມຈາກໂຍຄະ ເຊິ່ງບໍ່ມີທຳອື່ນຍິ່ງກວ່າ ຢ່າງນີ້ຍ້ອນແນວນັ້ນ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍຈັກລະລາບສັກກາຣະແລະຄວາມສັນເສີນທີ່ເກີດຂຶ້ນ ລາບສັກກາຣະແລະຄວາມສັນເສີນທີ່ເກີດຂຶ້ນແລ້ວ ຈັກບໍ່ຄອບງຳຈິດຂອງເຮົາທັງຫຼາຍຕັ້ງຢູ່ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ພະລິສະສູດທີ ໔ ຈົບ**

# ໓. ກຸມມະສູດ

## ວ່າດ້ວຍພິກຂຸຕິດລາບສັກກາຣະແລະຄວາມສັນເສີນ

ປຽບຄື ເຕົ່າຖືກເຊືອກມັດ

[໑໕໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຕໍ່ການບັນລຸທຳເລື້ອງເຄີຍມີມາແລ້ວ ມີຕະກູນເຕົ່າໃຫຍ່ອາໄສຢູ່ໃນແມ່ນ້ຳແຫ່ງໜຶ່ງມາດົນ ຄັ້ງໜຶ່ງ ເຕົ່າໂຕໜຶ່ງເຂົ້າໄປຫາເຕົ່າອີກໂຕໜຶ່ງຮອດບ່ອນຢູ່ແລ້ວເວົ້າຂຶ້ນວ່າ ອ້າຍເຕົ່າ ເຈົ້າຢ່າໄດ້ໄປສູ່ທ້ອງຖິ່ນນັ້ນເດີ້

ແຕ່ເຕົ່າໂຕນັ້ນ ບໍ່ຟັງໄດ້ໄປສູ່ທ້ອງຖິ່ນນັ້ນແລ້ວ ຖືກນາຍພານຍິງດ້ວຍລູກດອກ ລຳດັບນັ້ນເຕົ່າໂຕທີ່ຖືກຍິງເຂົ້າໄປຫາເຕົ່າໂຕນັ້ນຮອດບ່ອນຢູ່ ເຕົ່າໂຕນັ້ນ ໄດ້ເຫັນເຕົ່າໂຕທີ່ຖືກຍິງກຳລັງຍ່າງມາແຕ່ໄກ ຈຶ່ງຖາມ ວ່າ

ອ້າຍເຕົ່າ ເຈົ້າບໍ່ໄດ້ໄປທ້ອງຖິ່ນນັ້ນແມ່ນບໍ?

ອ້າຍເຕົ່າ ເຮົາໄດ້ໄປສູ່ຫ້ອງຖິ່ນນັ້ນມາແລ້ວ

ອ້າຍເຕົ່າ ເຈົ້າບໍ່ບາດເຈັບ ບໍ່ຖືກທຸບຕີແມ່ນບໍ?

ຂ້ອຍບໍ່ບາດເຈັບ ບໍ່ຖືກທຸບຕີ ແຕ່ຂ້ອຍມີເຊືອກເສັ້ນໜຶ່ງຕິດຫຼັງມານຳ

ເຕົ່າໂຕນັ້ນກ່າວ ວ່າ ຖ້າຈັ່ງຊັ້ນແລ້ວອ້າຍເຕົ່າ ເຈົ້າບໍ່ບາດເຈັບ ບໍ່ຖືກທຸບຕີກໍຕາມ ແຕ່ບິດາ ມານດາ ປູ່ ຍ່າ ຕາ ຍາຍ ຂອງເຈົ້າໄດ້ຮັບທຸກ ເຖິງຄວາມພິນາດ ຍ້ອນເຊືອກເສັ້ນນີ້ ເຈົ້າຈົ່ງໄປດ່ຽວນີ້ ເຈົ້າບໍ່ແມ່ນພວກຂອງເຮົາແລ້ວ

ຄຳວ່າ ພານ ນີ້ ເປັນຊື່ຂອງມານໃຈບາບ ຄຳວ່າ ລູກດອກ ນີ້ ເປັນຊື່ຂອງລາບສັກກາຣະແລະຄວາມສັນເສີນ ຄຳວ່າ ເຊືອກ ນີ້ ເປັນຊື່ຂອງນັນທິຣາຄະ

ພິກຂຸລາງອົງຍິນດີ ພໍໃຈລາບສັກກາຣະ ແລະຄວາມສັນເສີນທີ່ເກີດຂຶ້ນແລ້ວ ພິກຂຸນີ້ເຮົາຮຽກວ່າ ໄດ້ຮັບທຸກ ເຖິງຄວາມພິນາດ ຍ້ອນລາບສັກກາຣະແລະຄວາມສັນເສີນ ອັນປຽບຄືລູກດອກ ຖືກມານໃຈບາບເຮັດໄດ້ຕາມໃຈປາຖະໜາ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ກຸມມະສູດທີ ໓ ຈົບ**

# ໔. ທີຄະໂລມິກະສູດ

## ວ່າດ້ວຍພິກຂຸຕິດລາບສັກກາຣະແລະຄວາມສັນເສີນ

ປຽບຄື ແກະຂົນຍາວຖືກໜາມຂ້ອງ

[໑໙໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຕໍ່ການບັນລຸທຳ ປຽບຄື ແກະຂົນຍາວເຂົ້າໄປສູ່ພຸ່ມໜາມ ມັນເພິ່ງຕິດຖືກໜາມຂ້ອງເກາະ ໄດ້ຮັບທຸກເຖິງຄວາມພິນາດໃນບ່ອນນັ້ນ ໆ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ພິກຂຸ ບາງຮູບໃນທຳວິໄນນີ້ ຖືກລາບສັກກາຣະ ແລະຄວາມສັນເສີນຄອບງຳ ຍໍ່າຍີຈິດ ເວລາເຊົ້າ ຄອງອັນຕະຣະວາສົກຖືບາດ ແລະຈີວອນເຂົ້າໄປບິນທະບາດຍັງບ້ານຫຼືນິຄົມ ທ່ານຕິດຂ້ອງ ຖືກປັດໃຈຂ້ອງເກາະ ໄດ້ຮັບທຸກເຖິງຄວາມພິນາດໃນບ່ອນນັ້ນ ໆ

ພິກຂຸທັງຫຼາຍ ລາບສັກກາຣະ ແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້

**ທີຄະໂລມິກສູດທີ ໔ ຈົບ**

# ໕. ມີລະຫະກະສູດ

## ວ່າດ້ວຍພິກຂຸຕິດລາບສັກກາຣະແລະຄວາມສັນເສີນ

ປຽບຄື ແມງວັນກິນຄູດ

[໑໖໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຕໍ່ການບັນລຸທຳ ປຽບຄື ແມງວັນກິນຄູດເຕັມທ້ອງແລະເປື້ອນຄູດ ແລະ ຂ້າງໜ້າຂອງມັນຍັງມີຄູດກອງໃຫຍ່ ມັນຍັງດູໝິ່ນແມງວັນເຫຼົ່າອື່ນວ່າ ເຮົາກິນຄູດເຕັມທ້ອງແລະເປື້ອນຄູດ ເຮົາຍັງມີຄູດກອງໃຫຍ່ຢູ່ຂ້າງໜ້າອີກ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ພິກຂຸລາງອົງໃນທຳວິໄນນີ້ ຖືກລາບສັກກາຣະແລະຄວາມສັນເສີນຄອບງຳ ຍ່ຳຍີຈິດ ເວລາເຊົ້າ ຄອງອັນຕະຣະວາສົກຖືບາດ ແລະຈີວອນເຂົ້າໄປບິນທະບາດຍັງບ້ານ ຫຼື ນິຄົມ ສັນ (ພັດຕາຫານ) ຈົນພໍແກ່ຄວາມຕ້ອງການ ແລະ ທາຍົກຍັງນິມົນໃຫ້ສັນໃນມື້ອື່ນເຊົ້າຕື່ມອີກ ແມ່ນອາຫານຂອງທ່ານຈະເຕັມບາດຢູ່ ທ່ານສູ່ໄປອາຣາມແລ້ວຍັງເວົ້າໂອ້ອວດທ່າມກາງໝູ່ພິກຂຸ ວ່າ ຂ້ານ້ອຍສັນພໍແກ່ຄວາມຕ້ອງການແລ້ວ ທາຍົກຍັງນິມົນໃຫ້ສັນໃນມື້ອື່ນເຊົ້ານີ້ຕື່ມອີກ ອາຫານຂອງຂ້ານ້ອຍກໍເຕັມບາດຢູ່ ແລະ ຍັງຈະໄດ້ຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານອີກ ສ່ວນພິກຂຸເຫຼົ່າອື່ນ ມີບຸນໜ້ອຍ ມີສັກນ້ອຍ ຈຶ່ງບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ທ່ານຖືກລາບສັກກາຣະ ແລະ ຄວາມສັນເສີນຄອບງຳ ຍ່ຳຍີຈິດ ຈຶ່ງດູໝິ່ນພິກຂຸເຫຼົ່າອື່ນ ຜູ້ມີສິນເປັນທີ່ຮັກ ການກະທຳຂອງໂມຄະບຸຣຸດນັ້ນ ເປັນໄປເພື່ອບໍ່ແມ່ນປະໂຫຍດ ເພື່ອທຸກຕະຫຼອດການລະນານ

ພິກຂຸທັງຫຼາຍ ລາບສັກກາຣະ ແລະ ຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້

**ມີລະຫະກະສູດທີ ໕ ຈົບ**

# ໖. ອະສະນິສູດ

## ວ່າດ້ວຍລາບສັກກາຣະແລະຄວາມສັນເສີນ

ປຽບຄື ສາຍຟ້າ

[໑໖໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຕໍ່ການບັນລຸທຳ ສາຍຟ້າຜ່າຖືກໃຜ ລາບສັກກາຣະແລະຄວາມສັນເສີນ ຍ່ອມຕິດຕາມພຣະເສຂະຜູ້ຍັງບໍ່ບັນລຸອະ ຣະຫັດຕະຜົນ

ຄຳວ່າ ສາຍຟ້າຜ່າ ນີ້ ເປັນຊື່ຂອງລາບສັກກາຣະ ແລະ ຄວາມສັນເສີນ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ອະສະນິສູດທີ ໖ ຈົບ**

# ໗. ທິດທະສູດ

## ວ່າດ້ວຍລາບສັກກາຣະແລະຄວາມສັນເສີນ

ປຽບຄື ລູກສອນອາບຢາພິດ

[໑໖໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຕໍ່ການບັນລຸທຳ ບຸກຄົນຍິງລູກສອນອາບຢາພິດຖືກໃຜ ລາບສັກກາຣະແລະຄວາມສັນເສີນ ຍ່ອມຕິດຕາມພຣະເສຂະຜູ້ຍັງບໍ່ບັນລຸອະຣະຫັດຕະຜົນ

ຄຳວ່າ ລູກສອນ ນີ້ ເປັນຊື່ຂອງລາບສັກກາຣະ ແລະ ຄວາມສັນເສີນ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ທິດທະສູດທີ ໗ ຈົບ**

# ໗. ສິຄາລະສູດ

## ວ່າດ້ວຍພິກຂຸຕິດລາບສັກກາຣະແລະຄວາມສັນເສີນ

ປຽບຄື ໝາຈອກເປັນຂີ້ເຮື້ອນ

[໑໖໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຕໍ່ການບັນລຸທຳ

ພິກຂຸທັງຫຼາຍ ເມື່ອເຊົ້າມືດ ທ່ານທັງຫຼາຍໄດ້ເຫັນໝາຈອກແກ່ທີ່ມາອາໄສຢູ່ບໍ?

ເຫັນ ຂ້ານ້ອຍ

ໝາຈອກແກ່ນັ້ນ ເປັນຂີ້ເຮື້ອນ ຢູ່ໃນເຮືອນວ່າງກໍບໍ່ຍິນດີ ຢູ່ທີ່ເຫງົ້າໄມ້ກໍບໍ່ຍິນດີ ຢູ່ໃນກາງແຈ້ງກໍບໍ່ຍິນດີ ຍ່າງ ຍືນ ນັ່ງ ນອນໃນບ່ອນໃດ ໆ ກໍເປັນທຸກໃນບ່ອນນັ້ນ ໆ ພິກຂຸບາງຮູບໃນທຳວິໄນນີ້ກໍຄືກັນ ຖືກລາບສັກກາຣະແລະຄວາມສັນເສີນຄອບງຳ ຍ່ຳຍີຈິດ ຢູ່ໃນເຮືອນວ່າງກໍບໍ່ຍິນດີ ຢູ່ທີ່ເຫງົ້າໄມ້ກໍບໍ່ຍິນດີ ຢູ່ໃນກາງແຈ້ງກໍບໍ່ຍິນດີ ຍ່າງ ຍືນ ນັ່ງ ນອນໃນບ່ອນໃດ ໆ ກໍເປັນທຸກໃນບ່ອນນັ້ນ ໆ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ສິຄາລະສູດທີ ໗ ຈົບ**

# ໘. ເວຣົາພະສູດ

## ວ່າດ້ວຍພິກຂຸຕິດລາບສັກກາຣະແລະຄວາມສັນເສີນ

ປຽບຄື ນົກຖືກລົມຫົວກຸດພັດ

[໑໖໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຕໍ່ການບັນລຸທຳ

ລົມຫົວກຸດພັດຢູ່ເທິງອາກາດ ຊັດນົກທີ່ກຳລັງບິນຢູ່ໃນອາກາດ ເມື່ອມັນຖືກລົມຫົວກຸດຊັດ ຕີນໄປທາງໜຶ່ງ ປີກໄປທາງໜຶ່ງ ຫົວໄປທາງໜຶ່ງ ໂຕໄປທາງໜຶ່ງ ພິກຂຸ ບາງຮູບໃນທຳວິໄນນີ້ກໍ ຄືກັນ ຖືກລາບສັກກາຣະ ແລະ ຄວາມສັນເສີນຄອບງຳ ຍ່ຳຍີຈິດ ເວລາເຊົ້າ ຄອງອັນຕະຣະວາ ສົກຖືບາດ ແລະ ຈີວອນເຂົ້າໄປບິນທະບາດຍັງບ້ານ ຫຼື ນິຄົມ ບໍ່ຖືຮັກສາກາຍວາຈາຈິດ ບໍ່ຕັ້ງ ສະຕິໃຫ້ໝັ້ນຄົງ ບໍ່ສັງລວມອິນຊີ ທ່ານເຫັນມາຕຸຄາມນຸ່ງຫົ່ມ ບໍ່ຮຽບຮ້ອຍໃນບ່ອນນັ້ນ ຣາຄະກໍ ລົບກວນຈິດຂອງທ່ານຍ້ອນເຫັນມາຕຸຄາມນຸ່ງຫົ່ມບໍ່ຮຽບຮ້ອຍ ທ່ານຖືກຣາຄະລົບກວນຈິດ ຈຶ່ງ ບອກຄືນສິກຂາກັບມາເປັນຄະຫຼືຫັດ ພິກຂຸພວກໜຶ່ງນຳຈີວອນຂອງທ່ານໄປ ພວກໜຶ່ງນຳບາດໄປ ພວກໜຶ່ງນຳຜ້ານິສີທະນະໄປ ພວກໜຶ່ງນຳກ່ອງເຂັມໄປ ປຽບຄືນົກຖືກ ລົມຫົວກຸດຊັດໄປສັນນັ້ນ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານ ທັງຫຼາຍເພິ່ງສຶກສາແນວນີ້

**ເວຣຳພະສູດທີ ໙ ຈົບ**

# ໑໐. ສະຄາຖະກະສູດ

## ວ່າດ້ວຍລາບສັກກາຣະແລະຄວາມສັນເສີນມີອະບາຍເປັນຜົນ

[໑໖໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຕໍ່ການບັນລຸທຳ

ເຮົາເຫັນຄົນລາງຄົນໃນໂລກນີ້ ຖືກສັກກາຣະຄອບງຳ ຍ່ຳຍີຈິດແລ້ວ ຫຼັງຈາກຕາຍແລ້ວ ກໍເຂົ້າເຖິງອະບາຍ ທຸກຄະຕິ ວິນິບາດ ນະຣົກ ອັນໜຶ່ງ ເຮົາເຫັນຄົນລາງຄົນໃນໂລກນີ້ ຖືກ ຄວາມເສື່ອມ ສັກກາຣະຄອບງຳ ຍ່ຳຍີຈິດແລ້ວ ຫຼັງຈາກຕາຍແລ້ວກໍເຂົ້າເຖິງອະບາຍ ທຸກຄະຕິ ວິນິບາດ ນະຣົກ

ອັນໜຶ່ງ ເຮົາເຫັນຄົນລາງຄົນໃນໂລກ ນີ້ ຖືກສັກກາຣະ ແລະ ຄວາມເສື່ອມສັກກາຣະ ທັງສອງຢ່າງ ຄອບງຳ ຍ່ຳຍີຈິດແລ້ວ ຫຼັງຈາກຕາຍແລ້ວກໍເຂົ້າເຖິງອະບາຍ ທຸກຄະຕິ ວິນິບາດ ນະຣົກ

ພິກຂຸທັງຫຼາຍ ລາບສັກກາຣະ ແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານ ທັງຫຼາຍເພິ່ງສຶກສາແນວນີ້

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາ ປະພັນຕໍ່ໄປອີກ ວ່າ

ສະມາທິຂອງພິກຂຸໃດ ຜູ້ມີປົກກະຕິຢູ່ດ້ວຍຄວາມບໍ່ຜະໝາດ
ຍ່ອມບໍ່ຫວັ່ນໄຫວດ້ວຍເຫດ ໔ ປະການ ຄື
(໑) ດ້ວຍມີຜູ້ສັກກາຣະ (໔) ດ້ວຍບໍ່ມີຜູ້ສັກກາຣະ
ພິກຂຸຜູ້ເຂົ້າຊານມີຄວາມພຽນພິຈາລະນາດ້ວຍປັນຍາທີ່ສຸຂຸມ
ຍິນດີໃນທຳເປັນທີ່ສິ້ນໄປແຫ່ງອຸປາທານນັ້ນ
ນັກປາດທັງຫຼາຍຮຽກວ່າ ສັດຕະບຸຣຸດ

**ສະຄາຖະກະສູດທີ ໑໐ ຈົບ**

## ປະຖົມວັກ ຈົບ

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໔. ທຸຕິຍະວັກ

## ໝວດທີ ໔

# ໑. ສຸວັນນະປາຕິສູດ

## ວ່າດ້ວຍຖາດຄໍາ

[໑໖໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຕໍ່ການບັນລຸທໍາ ຯລຯ

ເຮົາກໍານົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈ ຢ່າງນີ້ວ່າ ແມ່ນຍ້ອນຖາດຄໍາເຕັມດ້ວຍຜົງເງິນເປັນເຫດ ທ່ານຜູ້ນີ້ກໍບໍ່ຈົງໃຈເວົ້າຕົວະ ຕໍ່ມາເຮົາເຫັນເຂົາຖືກລາບສັກກາຣະແລະຄວາມສັນເສີນຄອບງໍາ ຍໍ່າຍີຈິດແລ້ວ ກໍເວົ້າຕົວະທັງທີ່ຮູ້ຢູ່

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ແນວນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ສຸວັນນະປາຕິສູດທີ ໑ ຈົບ**

# ໔. ຣູປິຍະປາຕິສູດ

## ວ່າດ້ວຍຖາດຣູປິຍະ

[໑໖໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະ ແລະ ຄວາມສັນເສີນເປັນສິ່ງທາລຸນ ຯລຯ ຕໍ່ການບັນລຸທໍາ ຯລຯ

ເຮົາກໍານົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈ ແນວນີ້ວ່າ ແມ່ນຍ້ອນຖາດຄໍາເຕັມດ້ວຍຜົງຄໍາເປັນເຫດ ທ່ານຜູ້ນີ້ກໍບໍ່ຈົງໃຈເວົ້າຕົວະ ຕໍ່ມາເຮົາເຫັນເຂົາຖືກລາບສັກກາຣະແລະຄວາມສັນເສີນຄອບງໍາ ຍໍ່າຍີຈິດແລ້ວ ກໍເວົ້າຕົວະທັງທີ່ຮູ້ຢູ່

ພິກຂຸທັງຫຼາຍ ລາບສັກກາຣະ ແລະ ຄວາມສັນເສີນເປັນສິ່ງທາລຸນ ຯລຯ ແນວນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ຣູປີຍະປາຕີສູດທີ ໔ ຈົບ**

# ໓-໑໐. ສຸວັນນະນິກຂະສຸດຕາທິອັດຖະກະ

## ວ່າດ້ວຍພຣະສູດ ໗ ສູດ ມີສູດວ່າດ້ວຍຄຳແທ່ງເປັນຕົ້ນ

[໑໖໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ເຮົາກຳນົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈ ແນວນີ້ວ່າແມ່ນຍ້ອນຄຳແທ່ງເປັນເຫດ ຯລຯ

**ສູດທີ ໓ ຈົບ**

໔. ແມ່ນຍ້ອນຄຳ ໑໐໐ ແທ່ງເປັນເຫດ ຯລຯ

**ສູດທີ ໔ ຈົບ**

໕. ແມ່ນຍ້ອນຄຳສິງຄີເປັນເຫດ ຯລຯ

**ສູດທີ ໕ ຈົບ**

໖. ແມ່ນຍ້ອນຄຳສິງຄີ ໑໐໐ ແທ່ງເປັນເຫດ ຯລຯ

**ສູດທີ ໖ ຈົບ**

໗. ແມ່ນຍ້ອນແຜ່ນດິນທີ່ເຕັມດ້ວຍທາດຄຳເປັນເຫດ ຯລຯ

**ສູດທີ ໗ ຈົບ**

໘. ແມ່ນຍ້ອນເຫັນແກ່ຂອງກຳນັນພຽງເລັກໜ້ອຍເປັນເຫດ ຯລຯ

**ສູດທີ ໘ ຈົບ**

໙. ແມ່ນຍ້ອນຊີວິດເປັນເຫດ ຯລຯ

**ສູດທີ ໙ ຈົບ**

໑໐. ແມ່ນຍ້ອນນາງງາມປະຈຳແຕ່ວັນເປັນເຫດ ທ່ານຜູ້ນີ້ກໍບໍ່ຈິງໃຈເວົ້າຕົວະ ຕໍ່ມາ ເຮົາເຫັນເຂົາຖືກລາບສັກກາຣະ ແລະ ຄວາມສັນເສີນຄອບງຳ ຍໍ່າຍີຈິດແລ້ວ ກໍເວົ້າຕົວະທັງທີ່ຮູ້ຢູ່

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ฯລฯ ແນວນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ຊະນະປະທະກັນລະຍານີສູດທີ ໑໐ ຈົບ**

**ທຸຕິຍະວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ສຸວັນນະປາຕິສູດ
໒. ສຸວັນນະນິກຂະສູດ
໓. ສິງຄີນິກຂະສູດ
໔. ປະຖະວີສູດ
໕. ຊີວິຕະສູດ
໖. ຣູປິຍະປາຕິສູດ
໗. ສຸວັນນະນິກຂະສະຕະສູດ
໘. ສິງຄີນິກຂະສະຕະສູດ
໙. ອາມິດກິນຈິກຂະສູດ
໑໐. ຊະນະປະທະກັນລະຍານີສູດ

# ໓. ຕະຕິຍະວັກ

## ໝວດທີ ໓

# ໑. ມາຕຸຄາມະສູດ

## ວ່າດ້ວຍມາຕຸຄາມ

[໑໗໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ฯລฯ ເຂດເມືອງສາວັດຖີ ฯລฯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ฯລฯ ຕໍ່ການບັນລຸທຳ ฯລฯ

ມາຕຸຄາມຄົນດຽວບໍ່ສາມາດຄອບງຳຈິດຂອງພິກຂຸອົງໜຶ່ງ ແຕ່ລາບສັກກາຣະແລະຄວາມສັນເສີນສາມາດຄອບງຳຈິດຂອງພິກຂຸໄດ້ ฯລฯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້

**ມາຕຸຄາມະສູດທີ ໑ ຈົບ**

# ໘. ກັນລະຍານິສູດ

## ວ່າດ້ວຍນາງງາມ

[໑໗໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະ ແລະ ຄວາມສັນເສີນເປັນສິ່ງທາລຸນ ຯລຯ ຕໍ່ການບັນລຸທໍາ ຯລຯ

ນາງງາມປະຈໍາແຄວ້ນຄົນດຽວບໍ່ສາມາດຄອບງໍາຈິດຂອງພິກຂຸອົງໜຶ່ງໄດ້ ແຕ່ລາບສັກກາຣະແລະຄວາມສັນເສີນສາມາດຄອບງໍາຈິດຂອງພິກຂຸໄດ້ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ກັນລະຍານິສູດທີ ໘ ຈົບ**

# ໙. ເອກະປຸດຕະກະສູດ

## ວ່າດ້ວຍບຸດຄົນດຽວ

[໑໗໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະ ແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຕໍ່ການບັນລຸທໍາ ຯລຯ

ອຸປາສິກາຜູ້ມີສັດທາ ເມື່ອຈະວິງວອນບຸດຄົນດຽວ ເຊິ່ງເປັນທີ່ໜ້າຮັກໜ້າພໍໃຈ ໂດຍຖືກຕ້ອງ ເພິ່ງວິງວອນວ່າ ລູກເອີຍ ຂໍເຈົ້າຈົ່ງເປັນຄືກັນກັບຈິດຕະຄະຫະບໍດີ ແລະຫັດຖະກະອາລະວະກະອຸປາສົກເທີ້ນ

ບັນດາອຸປາສິກສາວິກຂອງເຮົາ ຄື ຈິດຕະຄະຫະບໍດີແລະຫັດຖະກະອາລະວະກະອຸປາສິກ ເປັນຜູ້ຊັ່ງໄດ້ແທກໄດ້(ນາງເພິ່ງວິງວອນອີກວ່າ) ຖ້າເຈົ້າອອກຈາກເຮືອນບວດເປັນບັນພະຊິດ ກໍຂໍໃຫ້ເປັນເຊັ່ນພຣະສາຣີບຸດແລະພຣະໂມກຄັນລານະເທີ້ນ

ບັນດາພິກຂຸຜູ້ເປັນສາວົກຂອງເຮົາ ຄື ສາຣີບຸດແລະໂມກຄັນລານະ ເປັນຜູ້ຊັ່ງໄດ້ແທກໄດ້ (ນາງເພິ່ງວິງວອນຕໍ່ໄປວ່າ) ລູກເອີຍ ຂໍລາບສັກກາຣະແລະຄວາມສັນເສີນ ຈົ່ງຢ່າຄອບງຳເຈົ້າຜູ້ເປັນເສຂະ ທີ່ຍັງບໍ່ບັນລຸອະຣະຫັດຕະຜົນເລີຍ ຖ້າລາບສັກກາຣະແລະຄວາມສັນເສີນຄອບງຳພິກຂຸຜູ້ເປັນເສຂະ ທີ່ຍັງບໍ່ບັນລຸອະຣະຫັດຕະຜົນ ກໍຍ່ອມເປັນອັນຕະລາຍແກ່ທ່ານ

ພິກຂຸທັງຫຼາຍ ລາບສັກກາຣະ ແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ແນວນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ເອກະປຸດຕະກະສູດທີ ໓ ຈົບ**

# ໔. ເອກະທີຕຸສູດ

## ວ່າດ້ວຍທິດາຄົນດຽວ

[໑໗໓] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຕໍ່ການບັນລຸທຳ ຯລຯ

ອຸປາສິກາ ຜູ້ມີສັດທາເມື່ອຈະວິງວອນທິດາຄົນດຽວ ເຊິ່ງເປັນທີ່ໜ້າຮັກໜ້າພໍໃຈໂດຍຖືກຕ້ອງ ເພິ່ງວິງວອນວ່າ ລູກເອີຍ ຂໍເຈົ້າຈົ່ງເປັນຄືກັນກັບນາງຂຸດຂຸດຕະຣາອຸປາສິກາ ແລະນາງນັນທະມານດາ ຊາວເມືອງເວລຸກັນທະກະເທີ້ນ

ບັນດາອຸປາສິກາຜູ້ເປັນສາວິກາຂອງເຮົາ ຄື ຂຸດຂຸດຕະຣາອຸປາສິກາ ແລະນາງນັນທະມານດາ ຊາວເມືອງເວລຸກັນທະກະ ເປັນຜູ້ຊັ່ງໄດ້ແທກໄດ້ (ນາງເພິ່ງວິງວອນອີກວ່າ) ຖ້າແມ່ອອກຈາກເຮືອນບວດເປັນບັນພະຊິດ ກໍຂໍໃຫ້ເປັນຄືກັນກັບເຂມາພິກຂຸນີ ແລະ ອຸບົນວັນນາພິກຂຸນີເທີ້ນ

ບັນດາພິກຂຸນີຜູ້ເປັນສາວິກາຂອງເຮົາ ເຂມາພິກຂຸນີແລະອຸບົນວັນນາພິກຂຸນີ ເປັນຜູ້ຊັ່ງໄດ້ແທກໄດ້ (ນາງເພິ່ງວິງວອນຕໍ່ໄປວ່າ) ລູກເອີຍ ຂໍລາບສັກກາຣະແລະຄວາມສັນເສີນ ຈົ່ງຢ່າ

ຄອບງຳເຈົ້າຜູ້ເປັນເສຂະ ທີ່ຍັງບໍ່ບັນລຸອະຣະຫັດຕະຜົນເລີຍ ຖ້າລາບສັກກາຣະແລະຄວາມສັນເສີນຄອບງຳພິກຂຸນີຜູ້ເປັນເສຂະ ຍັງບໍ່ບັນລຸອະຣະຫັດຕະຜົນກໍຍ່ອມເປັນອັນຕະລາຍແກ່ທ່ານ

ພິກຂຸທັງຫຼາຍ ລາບສັກກາຣະ ແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ເອກະທີຕຸສູດທີ ໔ ຈົບ**

# ໕. ສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ

[໑໓໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກຈາກລາບສັກກາຣະ ແລະ ຄວາມສັນເສີນຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນ ບໍ່ຈັດວ່າ ເປັນສະມະໜະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ແລະ ທ່ານເຫຼົ່ານັ້ນ ກໍບໍ່ເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ແລະປະໂຫຍດຂອງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ສ່ວນສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກ ຈາກລາບສັກກາຣະ ແລະຄວາມສັນເສີນຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນ ຈັດວ່າເປັນສະມະນະໃນໝູ່ສະມະນະ ແລະຈັດວ່າເປັນພາມໃນໝູ່ພາມ ແລະທ່ານເຫຼົ່ານັ້ນ ກໍເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ແລະ ປະໂຫຍດຂອງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

**ສະມະນະພາມມະນະສູດທີ ໕ ຈົບ**

# ໖. ທຸຕິຍະສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໒

[໑໓໕] ພຣະຜູ້ມີພຣະພາກເຈົ້າປະທັບ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກລາບສັກກາຣະ ແລະຄວາມສັນເສີນຕາມຄວາມເປັນຈິງ ຯລຯ (ທ່ານເຫຼົ່ານັ້ນ) ຮູ້ແຈ້ງ ຯລຯ

ພິກຂຸທັງຫຼາຍ ສ່ວນສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກລາບສັກກາຣະ ແລະຄວາມສັນເສີນຕາມຄວາມເປັນຈິງ ຯລຯ ເຂົ້າເຖິງຢູ່ໃນປັດຈຸບັນ

**ທຸຕິຍະສະມະນະພາມມະນະສູດທີ ໖ ຈົບ**

## ໗. ຕະຕິຍະສະມະນະພາມມະນະສູດ

### ວ່າດ້ວຍສະມະນະພາມ ສູດທີ ໓

[໑໗໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງລາບສັກກາຣະ ແລະຄວາມສັນເສີນ ຄວາມເກີດແຫ່ງລາບສັກກາຣະແລະຄວາມສັນເສີນ ຄວາມດັບແຫ່ງລາບສັກກາຣະແລະຄວາມສັນເສີນ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງລາບສັກກາຣະ ແລະຄວາມສັນເສີນ ຯລຯ ຮູ້ແຈ້ງ ຯລຯ ເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

**ຕະຕິຍະສະມະນະພາມມະນະສູດທີ ໗ ຈົບ**

## ໘. ສະວິສູດ

### ວ່າດ້ວຍຜິວ

[໑໗໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ລາບສັກກາຣະແລະຄວາມສັນເສີນຍ່ອມຕັດຜິວ ເມື່ອຕັດຜິວແລ້ວຍ່ອມຕັດໜັງ ເມື່ອຕັດໜັງແລ້ວຍ່ອມຕັດຊີ້ນ ເມື່ອຕັດຊີ້ນແລ້ວຍ່ອມຕັດເອັນ ເມື່ອຕັດເອັນແລ້ວຍ່ອມຕັດກະດູກ ເມື່ອຕັດກະດູກແລ້ວກໍຕັ້ງຕິດເຍື່ອໃນກະດູກຢູ່

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ສະວິສູດທີ ໗ ຈົບ**

# ໘. ຣັດຊຸສູດ

## ວ່າດ້ວຍເຊືອກ

[໑໗໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະ ແລະ ຄວາມສັນເສີນເປັນສິ່ງທາລຸນ ລາບສັກກາຣະແລະຄວາມສັນເສີນຍ່ອມຕັດຜິວ ເມື່ອຕັດຜິວແລ້ວຍ່ອມຕັດໜັງ ເມື່ອຕັດໜັງແລ້ວຍ່ອມຕັດຊີ້ນ ເມື່ອຕັດຊີ້ນແລ້ວຍ່ອມຕັດເອັນ ເມື່ອຕັດເອັນແລ້ວຍ່ອມຕັດກະດູກ ເມື່ອຕັດກະດູກແລ້ວກໍຕັ້ງຕິດເຍື່ອໃນກະດູກຢູ່

ປຽບຄື ບຸຣຸດຜູ້ຊົງພະລັງ ເອົາເຊືອກຂົນຫາງສັດແນວເໜີຍວພັນແຂ່ງ ແລ້ວສີໄປສີມາ ເຊືອກນັ້ນເພິ່ງຕັດຜິວ ເມື່ອຕັດຜິວແລ້ວເພິ່ງຕັດໜັງ ເມື່ອຕັດໜັງແລ້ວເພິ່ງຕັດຊີ້ນ ເມື່ອຕັດຊີ້ນແລ້ວເພິ່ງຕັດເອັນ ເມື່ອຕັດເອັນແລ້ວເພິ່ງຕັດກະດູກ ເມື່ອຕັດກະດູກແລ້ວກໍຕັ້ງ ຕິດເຍື່ອໃນກະດູກຢູ່ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ລາບສັກກາຣະແລະຄວາມສັນເສີນ ຍ່ອມຕັດຜິວ ເມື່ອຕັດຜິວແລ້ວຍ່ອມຕັດໜັງ ເມື່ອຕັດໜັງແລ້ວຍ່ອມຕັດຊີ້ນ ເມື່ອຕັດຊີ້ນແລ້ວຍ່ອມຕັດເອັນ ເມື່ອຕັດເອັນແລ້ວຍ່ອມຕັດກະດູກ ເມື່ອຕັດກະດູກແລ້ວກໍຕັ້ງຕິດເຍື່ອໃນກະດູກຢູ່

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ຣັດຊຸສູດທີ ໘ ຈົບ**

# ໑໐. ພິກຂຸສູດ

## ວ່າດ້ວຍພິກຂຸ

[໑໗໘] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ເຮົາກ່າວວ່າ ລາບສັກກາຣະແລະຄວາມສັນເສີນເປັນອັນຕະລາຍ ແມ່ນແກ່ພິກຂຸຜູ້ເປັນອະຣະຫັນຕະຂີນາສົບ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ ທ່ານພຣະອານົນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ລາບສັກກາຣະ ແລະຄວາມສັນເສີນເປັນອັນຕະລາຍແກ່ພິກຂຸຂີນາສົບປະເພດໃດ?

ອານົນ ເຮົາບໍ່ກ່າວວ່າ ລາບສັກກາຣະແລະຄວາມສັນເສີນ ເປັນອັນຕະລາຍແກ່ເຈໂຕວິມຸດຕິອັນບໍ່ກຳເຮີບຂອງພິກຂຸຂີນາສົບນັ້ນ ແຕ່ເຮົາກ່າວວ່າລາບສັກກາຣະແລະຄວາມສັນເສີນເປັນອັນຕະລາຍແກ່ທຳເຄື່ອງຢູ່ເປັນສຸກໃນປັດຈຸບັນທີ່ພິກຂຸຂີນາສົບຜູ້ບໍ່ຜະໝາດ ມີຄວາມພຽນເຄື່ອງເຜົາກິເລດ ມີໃຈເດັດດ່ຽວຢູ່ນັ້ນ ບັນລຸແລ້ວ

ອານົນ ລາບສັກກາຣະ ແລະ ຄວາມສັນເສີນເປັນສິ່ງທາລຸນ ເຜັດຮ້ອນ ຫຍາບຄາຍເປັນອັນຕະລາຍຕໍ່ການບັນລຸທຳອັນກະເສມຈາກໂຍຄະ ເຊິ່ງບໍ່ມີທຳອື່ນຍິ່ງກວ່າ ຢ່າງນີ້ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍ ຈັກລະລາບສັກກາຣະແລະຄວາມສັນເສີນທີ່ເກີດຂຶ້ນ ລາບສັກກາຣະແລະຄວາມສັນເສີນທີ່ເກີດຂຶ້ນແລ້ວ ຈັກບໍ່ຄອບງຳຈິດຂອງເຮົາທັງຫຼາຍຕັ້ງຢູ່ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ພິກຂຸສູດທີ ໑໐ ຈົບ**

**ຕະຕິຍະວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໔. ຈະຕຸດຖະວັກ

## ໝວດທີ ໔

# ໑. ພິນທິສູດ

## ວ່າດ້ວຍການທຳລາຍ

[໑໗໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ເທວະທັດຖືກລາບສັກກາຣະແລະຄວາມສັນເສີນຄອບງຳ ຍ່ຳຍີຈິດແລ້ວ ຈຶ່ງທຳລາຍສົງ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ພິນທິສູດທີ ໑ ຈົບ**

# ໒. ກຸສະລະມູນສູດ

## ວ່າດ້ວຍກຸສົນມູນ

[໑໗໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ກຸສົນມູນຂອງເທວະທັດຜູ້ຖືກລາບສັກກາຣະ ແລະ ຄວາມສັນເສີນຄອບງຳ ຍ່ຳຍີຈິດ ເຖິງຄວາມຂາດສູນແລ້ວ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ກຸສົນມູນສູດທີ ໒ ຈົບ**

# ໓. ກຸສະລະທຳມະສູດ
## ວ່າດ້ວຍກຸສົນທຳ

[໑໗໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ກຸສົນທຳຂອງເທວະທັດຜູ້ຖືກລາບສັກກາຣະ ແລະ ຄວາມສັນເສີນຄອບງຳ ຍ່ຳຍີຈິດ ເຖິງຄວາມຂາດສູນແລ້ວ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ກຸສະລະທຳມະສູດທີ ໓ ຈົບ**

# ໔. ສຸກກະທຳມະສູດ
## ວ່າດ້ວຍທຳຂາວ

[໑໗໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ທຳຝ່າຍດີ (ຂາວ) ຂອງເທວະທັດຜູ້ຖືກລາບສັກກາຣະ ແລະ ຄວາມສັນເສີນຄອບງຳ ຍ່ຳຍີຈິດ ເຖິງຄວາມຂາດສູນແລ້ວ

ພິກຂຸທັງຫຼາຍ ລາບສັກກາຣະ ແລະຄວາມສັນເສີນເປັນສິ່ງທາລຸນ ຯລຯ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ສຸກກະທຳມະສູດທີ ໔ ຈົບ**

# ໕. ອະຈິຣະປັກກັນຕະສູດ
## ວ່າດ້ວຍການຫຼີກໄປບໍ່ດົນ

[໑໗໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດເມືອງຣາດຊະຄືເມື່ອພຣະເທວະທັດຫຼີກໄປບໍ່ດົນ ໃນບ່ອນນັ້ນ ພຣະຜູ້ພຣະພາກເຈົ້າ ຊົງຜາຣົບພຣະເທວະທັດໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ

ພິກຂຸທັງຫຼາຍ ລາບສັກກາຣະ ແລະຄວາມສັນເສີນເກີດແກ່ເທວະທັດເພື່ອຂ້າຕົນເອງ ເພື່ອຄວາມເສື່ອມ

ຕົ້ນກ້ວຍຖອກປີເພື່ອຂ້າຕົນເອງ ເພື່ອຄວາມເສື່ອມສັນໃດ ລາບສັກກາຣະແລະຄວາມສັນເສີນເກີດແກ່ເທວະທັດເພື່ອຂ້າຕົນເອງ ເພື່ອຄວາມເສື່ອມ ສັນນັ້ນ

ຕົ້ນໄຜ່ອອກຂີເພື່ອຂ້າຕົນເອງ ເພື່ອຄວາມເສື່ອມ ສັນໃດ ລາບສັກກາຣະແລະຄວາມສັນເສີນເກີດແກ່ເທວະທັດເພື່ອຂ້າຕົນເອງ ເພື່ອຄວາມເສື່ອມ ສັນນັ້ນ

ຕົ້ນອໍ້ອອກດອກເພື່ອຂ້າຕົນເອງ ເພື່ອຄວາມເສື່ອມ ສັນໃດ ລາບສັກກາຣະແລະຄວາມສັນເສີນເກີດແກ່ເທວະທັດເພື່ອຂ້າຕົນເອງ ເພື່ອຄວາມເສື່ອມ ສັນນັ້ນ

ແມ່ມ້າອັດສະດອນຖືພາເພື່ອຂ້າຕົນເອງ ເພື່ອຄວາມເສື່ອມ ສັນໃດ ລາບສັກກາຣະແລະຄວາມສັນເສີນເກີດແກ່ເທວະທັດເພື່ອຂ້າຕົນເອງ ເພື່ອຄວາມເສື່ອມ ສັນນັ້ນ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ໗ລ໗ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາ ປະພັນຕໍ່ໄປອີກວ່າ

ໝາກກ້ວຍຂ້າຕົ້ນກ້ວຍ ຂີໄຜ່ຂ້າຕົ້ນໄຜ່<br>
ດອກອໍ້ຂ້າຕົ້ນອໍ້ ລູກມ້າອັດສະດອນຂ້າແມ່ມ້າ ສັນໃດ<br>
ສັກກາຣະຍ່ອມຂ້າຄົນຊົ່ວ ສັນນັ້ນ

**ອະຈິຣະປັກກັນຕະສູດທີ ໕ ຈົບ**

## ໖. ປັນຈະຣະຖະສະຕະສູດ

### ວ່າດ້ວຍຣາດຊະລົດ ໕໐໐

[໑໗໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາດຊະຄຶ ສະໄໝນັ້ນ ອະຊາດສັດຕູຣາດຊະກຸມານສະເດັດໂດຍຣາດຊະລົດ ໕໐໐ ຄັນໄປບຳລຸງພຣະເທວະທັດທັງເວລາແລງເວລາເຊົ້າ ແລະ ຮັບສັ່ງໃຫ້ນຳພັດຕາຫານທີ່ສົມຄວນໄປພຣະຣາດຊະທານ ໕໐໐ ຊຸດ ຄັ້ງນັ້ນ ພິກຂຸເປັນຈຳນວນຫຼາຍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ອະຊາດສັດຕູຣາດຊະກຸມານສະເດັດໂດຍຣາດຊະລົດ ໕໐໐ ຄັນ ໄປບຳລຸງພຣະເທວະທັດ ທັງເວລາແລງເວລາເຊົ້າ ແລະ ຮັບສັ່ງໃຫ້ນຳພັດຕາຫານທີ່ສົມຄວນໄປພຣະຣາດຊະທານ ໕໐໐ ຊຸດ

ພິກຂຸທັງຫຼາຍ ທ່ານທັງຫຼາຍຢ່າຍິນດີລາບສັກກາຣະ ແລະຄວາມສັນເສີນຂອງເທວະທັດເລີຍ ແມ່ນອະຊາດສັດຕູຣາດຊະກຸມານຈັກສະເດັດໂດຍຣາດຊະລົດ ໕໐໐ ຄັນ ໄປບຳລຸງເທວະທັດ ທັງເວລາແລງ ເວລາເຊົ້າ ແລະ ຈັກຮັບສັ່ງໃຫ້ນຳພັດຕາຫານທີ່ສົມຄວນໄປພຣະຣາດຊະທານ ໕໐໐ ຊຸດ ພຽງໃດ ເທວະທັດກໍເພິ່ງຫວັງຄວາມເສື່ອມໃນກຸສົນທຳທັງຫຼາຍພຽງນັ້ນ ຫວັງຄວາມຈະເລີນບໍ່ໄດ້

ປຽບຄື ໝາຮ້າຍທີ່ເຂົາຍ່ອງບີ (ບີໝີບີປາ) ໃສ່ດັງ ເມື່ອເປັນແນວນີ້ ມັນກໍຍິ່ງ ຮ້າຍກວ່າເກົ່າຫຼາຍທົບ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ອະຊາດສັດຕູຣາດຊະກຸມານຈັກສະເດັດໂດຍຣາດຊະລົດ ໕໐໐ ຄັນ ໄປບຳລຸງເທວະທັດທັງເວລາແລງເວລາເຊົ້າ ແລະ ຈັກຮັບສັ່ງໃຫ້ນຳພັດຕາຫານ ທີ່ສົມຄວນໄປພຣະຣາດຊະທານ ໕໐໐ ຊຸດ ພຽງໃດ ເທວະທັດກໍເພິ່ງຫວັງຄວາມເສື່ອມໃນກຸສົນທຳ ທັງຫຼາຍພຽງນັ້ນ ຫວັງຄວາມຈະເລີນບໍ່ໄດ້

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ฯລฯ ຢ່າງນີ້ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ປັນຈະຣະຖະສະຕະສູດທີ ໖ ຈົບ**

## ກ. ມາຕຸສູດ
## ວ່າດ້ວຍມານດາ

[໑໗໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ฯລฯ ເຂດເມືອງສາວັດຖີ ฯລฯ

ພິກຂຸທັງຫຼາຍ ລາບສັກກາຣະ ແລະ ຄວາມສັນເສີນເປັນສິ່ງທາລຸນ ເຜັດຮ້ອນ ຫຍາບຄາຍ ເປັນອັນຕະລາຍຕໍ່ການບັນລຸທຳອັນກະເສມຈາກໂຍຄະ ເຊິ່ງບໍ່ມີທຳອື່ນຍິ່ງກວ່າ ເຮົາກຳນົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈ ແນວນີ້ວ່າ ແມ່ນຍ້ອນເຫດແຫ່ງມານດາ ທ່ານຜູ້ນີ້ກໍບໍ່ຈົງໃຈເວົ້າຕົວະ ຕໍ່ມາ ເຮົາເຫັນເຂົາຖືກລາບສັກກາຣະແລະຄວາມສັນເສີນ ຄອບງຳ ຍ່ຳຍີຈິດແລ້ວ ກໍເວົ້າຕົວະທັງທີ່ຮູ້ຢູ່

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ເຜັດຮ້ອນ ຫຍາບຄາຍເປັນອັນຕະລາຍຕໍ່ການບັນລຸທຳອັນກະເສມຈາກໂຍຄະ ເຊິ່ງບໍ່ມີທຳອື່ນຍິ່ງກວ່າ ຍ້ອນເຫດນັ້ນແລ

ທ່ານທັງຫຼາຍເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍຈັກລະລາບສັກກາຣະ ແລະຄວາມສັນເສີນທີ່ເກີດຂື້ນ ລາບສັກກາຣະ ແລະຄວາມສັນເສີນທີ່ເກີດຂື້ນແລ້ວ ກໍຈັກບໍ່ຄອບງໍາຈິດ ຂອງເຮົາທັງຫຼາຍຕັ້ງຢູ່ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ມາຕຸສູດທີ ໗ ຈົບ**

# ໘-໑໒. ປິຕຸສຸດຕາທິສັກກະ

## ວ່າດ້ວຍພຣະສູດ ໖ ສູດມີປິຕຸສູດເປັນຕົ້ນ

[໑໘໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ເຜັດຮ້ອນ ຫຍາບຄາຍເປັນອັນຕະລາຍຕໍ່ການບັນລຸທໍາອັນກະເສມຈາກໂຍຄະ ເຊິ່ງບໍ່ມີທໍາອື່ນຍິ່ງກວ່າ

ເຮົາກໍານົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ ດ້ວຍໃຈ ແນວນີ້ວ່າ ແມ່ນຍ້ອນເຫດແຫ່ງບິດາ ຯລຯ

**ສູດທີ ໘ ຈົບ**

໙. ແມ່ນຍ້ອນເຫດແຫ່ງອ້າຍນ້ອງຊາຍ ຯລຯ

**ສູດທີ ໙ ຈົບ**

໑໐. ແມ່ນຍ້ອນເຫດແຫ່ງເອື້ອຍນ້ອງສາວ ຯລຯ

**ສູດທີ ໑໐ ຈົບ**

໑໑. ແມ່ນຍ້ອນເຫດແຫ່ງບຸດ ຯລຯ

**ສູດທີ ໑໑ ຈົບ**

໑໒. ແມ່ນຍ້ອນເຫດແຫ່ງທິດາ ຯລຯ

**ສູດທີ ໑໒ ຈົບ**

໑໓. ເຮົາກຳນົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈ ແນວນີ້ວ່າແມ່ນຍ້ອນ ເຫດແຫ່ງປະຊາບໍດີ ທ່ານຜູ້ນີ້ກໍບໍ່ຈິງໃຈເວົ້າຕົວະ ຕໍ່ມາ ເຮົາເຫັນເຂົາຖືກລາບສັກກາຣະແລະຄວາມສັນເສີນຄອບງຳ ຍໍ່າຍີຈິດແລ້ວ ກໍເວົ້າຕົວະທັງທີ່ຮູ້ຢູ່

ພິກຂຸທັງຫຼາຍ ລາບສັກກາຣະແລະຄວາມສັນເສີນເປັນສິ່ງທາລຸນ ເຜັດຮ້ອນ ຫຍາບຄາຍເປັນອັນຕະລາຍຕໍ່ການບັນລຸທຳອັນກະເສມຈາກໂຍຄະ ເຊິ່ງບໍ່ມີທຳອື່ນຍິ່ງກວ່າ ຍ້ອນເຫດນັ້ນທ່ານທັງຫຼາຍເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍຈັກລະລາບສັກກາຣະ ແລະຄວາມສັນເສີນທີ່ເກີດຂຶ້ນ ລາບສັກກາຣະ ແລະຄວາມສັນເສີນທີ່ເກີດຂຶ້ນແລ້ວ ຈັກບໍ່ຄອບງຳຈິດຂອງເຮົາທັງຫຼາຍຕັ້ງຢູ່ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ປະຊາປະຕິສູດທີ ໑໓ ຈົບ**

**ຈະຕຸດຖະວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



**ລາບສັກກາຣະສັງຍຸດ ຈົບບໍລິບູນ**

# ໗. ຣາຫຸນສັງຍຸດ

# ໑. ປະຖົມວັກ

### ໝວດທີ ໑

## ໑. ຈັກຂຸສູດ

### ວ່າດ້ວຍຈັກຂຸ

[໑໙໗] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ທ່ານພຣະຣາຫຸນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານພຣະວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຫຼີກອອກໄປຢູ່ຄົນດຽວບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ຣາຫຸນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຈັກຂຸ (ຕາ) ທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ສິ່ງໃດບໍ່ທ່ຽງ ສິ່ງນັ້ນ ເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ໂສຕະ (ຫູ) ທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ຄານະ (ດັງ) ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ ຯລຯ

ຊິວຫາ (ລີ້ນ) ທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ກາຍທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ມະໂນ (ໃຈ )ທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ສິ່ງໃດບໍ່ທ່ຽງ ສິ່ງນັ້ນ ເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ

ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ຣາຫຸນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບບນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຯລຯ ຍ່ອມເບື່ອໜ່າຍແມ່ນໃນໂສຕະ ຍ່ອມເບື່ອໜ່າຍແມ່ນໃນຄານະ ຍ່ອມເບື່ອໜ່າຍແມ່ນໃນຊິວຫາ ຍ່ອມເບື່ອໜ່າຍແມ່ນໃນກາຍ ຍ່ອມເບື່ອໜ່າຍແມ່ນໃນມະໂນ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນ ເພື່ອຄວາມເປັນແບບນີ້ອີກຕໍ່ໄປ

**(ເພິ່ງຫຍໍ້ພຣະສູດທັງ ໑໐ ແບບນີ້)**

**ຈັກຂຸສູດທີ ໑ ຈົບ**

# ໔. ຣູບສູດ

## ວ່າດ້ວຍຣູບ

[໑໗໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຣາຫຸນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ທຳມາຣົມ ທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ຣາຫຸນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນສຽງ ຍ່ອມເບື່ອໜ່າຍແມ່ນໃນກິ່ນ ຍ່ອມເບື່ອໜ່າຍແມ່ນໃນຣົດ ຍ່ອມເບື່ອໜ່າຍແມ່ນໃນໂຜດຖັບພະ ຍ່ອມເບື່ອໜ່າຍແມ່ນໃນທຳມາຣົມ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຯລຯ ຮູ້ແຈ້ງວ່າ ຯລຯ

**ຮູບສູດທີ ໘ ຈົບ**

## ໙. ວິນຍານສູດ

### ວ່າດ້ວຍວິນຍານ

[໑໙໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຣາຫຸນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຈັກຂຸວິນຍານ (ຄວາມຮູ້ອາລົມທາງຕາ) ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ ຯລຯ

ໂສຕະວິນຍານ (ຄວາມຮູ້ອາລົມທາງຫູ) ຯລຯ ຄານະວິນຍານ (ຄວາມຮູ້ອາລົມທາງດັງ) ຯລຯ ຊິວຫາວິນຍານ (ຄວາມຮູ້ອາລົມທາງລີ້ນ) ຯລຯ ກາຍວິນຍານ (ຄວາມຮູ້ອາລົມທາງກາຍ) ຯລຯ ມະໂນວິນຍານ (ຄວາມຮູ້ອາລົມທາງໃຈ) ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ ຯລຯ

ຣາຫຸນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຯລຯ ຍ່ອມເບື່ອໜ່າຍແມ່ນໃນໂສຕະວິນຍານ ຍ່ອມເບື່ອໜ່າຍແມ່ນໃນຄານະວິນຍານ ຍ່ອມເບື່ອໜ່າຍແມ່ນໃນຊິວຫາວິນຍານ ຍ່ອມເບື່ອໜ່າຍແມ່ນໃນກາຍວິນຍານ ຍ່ອມເບື່ອໜ່າຍ ແມ່ນໃນມະໂນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຯລຯ ຮູ້ແຈ້ງວ່າ ຯລຯ

**ວິນຍານສູດທີ ໙ ຈົບ**

# ໔. ສຳຜັດສະສູດ

## ວ່າດ້ວຍສຳຜັດ

[໑໙໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຣາຫຸນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຈັກຂຸສຳຜັດທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ໂສຕະສຳຜັດ ຯລຯ ຄານະສຳຜັດ ຯລຯ ຊິວຫາສຳຜັດ ຯລຯ ກາຍສຳຜັດ ຯລຯ ມະໂນສຳຜັດ ທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຣາຫຸນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຯລຯ ຍ່ອມເບື່ອໜ່າຍແມ່ນໃນໂສຕະສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄານະສຳຜັດ ຍ່ອມເບື່ອໜ່າຍ ແມ່ນໃນຊິວຫາສຳຜັດ ຍ່ອມເບື່ອໜ່າຍແມ່ນໃນກາຍສຳຜັດ ຍ່ອມເບື່ອໜ່າຍແມ່ນໃນມະໂນສຳຜັດ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຯລຯ ຮູ້ແຈ້ງວ່າ ຯລຯ

**ສຳຜັດສະສູດທີ ໔ ຈົບ**

# ໕. ເວທະນາສູດ

## ວ່າດ້ວຍເວທະນາ

[໑໙໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຣາຫຸນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຈັກຂຸສຳຜັດສະຊາເວທະນາ (ເວທະນາເກີດແຕ່ຈັກຂຸສຳຜັດ) ທ່ຽງຫຼືບໍ່ທ່ຽງ

ບໍ່ທ່ຽງ ຂ້ານ້ອຍ ຯລຯ

ໂສຕະສຳຜັດສະຊາເວທະນາ (ເວທະນາທີ່ເກີດແຕ່ໂສຕະສຳຜັດ) ຯລຯ ຄານະສຳຜັດສະຊາເວທະນາ (ເວທະນາທີ່ເກີດແຕ່ຄານະສຳຜັດ) ຯລຯ ຊິວຫາສຳຜັດສະຊາເວທະນາ (ເວທະນາທີ່ເກີດແຕ່ຊິວຫາສຳຜັດ) ຯລຯ ກາຍສຳຜັດສະຊາເວທະນາ (ເວທະນາທີ່ເກີດແຕ່ກາຍສຳຜັດ) ຯລຯ ມະໂນສຳຜັດສະຊາເວທະນາ (ເວທະນາທີ່ເກີດແຕ່ມະໂນສຳຜັດ) ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຣາທຸນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດສະຊາເວທະນາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນໂສຕະສຳຜັດສະຊາເວທະນາ ຍ່ອມເບື່ອໜ່າຍແມ່ນໃນຄານະສຳຜັດສະຊາເວທະນາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຊິວຫາສຳຜັດສະຊາເວທະນາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນກາຍສຳຜັດສະຊາເວທະນາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນມະໂນສຳຜັດສະຊາເວທະນາ ຯລຯ ຮູ້ແຈ້ງວ່າ ຯລຯ

**ເວທະນາສູດທີ ໕ ຈົບ**

# ໖. ສັນຍາສູດ

## ວ່າດ້ວຍສັນຍາ

[໑໙໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຣາທຸນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບສັນຍາ (ຄວາມໝາຍຮູ້ຮູບ) ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ ຯລຯ

ສັດທະສັນຍາ (ຄວາມໝາຍຮູ້ສຽງ) ຯລຯ ຄັນທະສັນຍາ (ຄວາມໝາຍຮູ້ກິ່ນ) ຯລຯ ຣະສະສັນຍາ (ຄວາມໝາຍຮູ້ຣົດ) ຯລຯ ໂຜດຖັບພະສັນຍາ (ຄວາມໝາຍຮູ້ໂຜດຖັບພະ) ຯລຯ

ທຳມະສັນຍາ (ຄວາມໝາຍຮູ້ອາລົມທາງໃຈ) ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຣາທຸນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບສັນຍາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນສັດທະສັນຍາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຄັນທະສັນຍາ ຯລຯ ຍ່ອມເບື່ອໜ່າຍ ແມ່ນໃນຣະສະສັນຍາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນໂຜດຖັບພະສັນຍາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນທຳມະສັນຍາ ຯລຯ ຮູ້ແຈ້ງວ່າ ຯລຯ

**ສັນຍາສູດທີ ໖ ຈົບ**

# ໗. ສັນເຈຕະນາສູດ

## ວ່າດ້ວຍສັນເຈຕະນາ

[໑໙໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຣາຫຸນ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ຮູບສັນເຈຕະນາ (ຄວາມຈຳນົງຮູບ) ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ ຯລຯ

ສັດທະສັນເຈຕະນາ (ຄວາມຈຳນົງສຽງ) ຯລຯ ຄັນທະສັນເຈຕະນາ (ຄວາມຈຳນົງກິ່ນ) ຯລຯ ຣົດສັນເຈຕະນາ (ຄວາມຈຳນົງຣົດ) ຯລຯ ໂຜດຖັບພະສັນເຈຕະນາ (ຄວາມຈຳນົງໂຜດຖັບພະ) ຯລຯ ທຳມະສັນເຈຕະນາ (ຄວາມຈຳນົງທຳມາຣົມ) ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຣາຫຸນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບສັນເຈຕະນາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນສັດທະສັນເຈຕະນາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຄັນທະສັນເຈຕະນາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຣົດສັນເຈຕະນາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນໂຜດຖັບພະສັນເຈຕະນາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນທຳມະສັນເຈຕະນາ ຯລຯ ຮູ້ແຈ້ງວ່າ ຯລຯ

**ສັນເຈຕະນາສູດທີ ໗ ຈົບ**

# ໘. ຕັນຫາສູດ

## ວ່າດ້ວຍຕັນຫາ

[໑໙໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຣາຫຸນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ຮູບຕັນຫາທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ສັດທະຕັນຫາ ຯລຯ ຄັນທະຕັນຫາ ຯລຯ ຣະສະຕັນຫາ ຯລຯ ໂຜດຖັບພະຕັນຫາ ຯລຯ ທຳມະຕັນຫາ ທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຣາຫຸນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບຕັນຫາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນສັດທະຕັນຫາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຄັນທະຕັນຫາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຣະສະຕັນຫາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນໂຜດຖັບພະຕັນຫາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນທຳມະຕັນຫາ ຯລຯ ຮູ້ແຈ້ງວ່າ ຯລຯ

**ຕັນຫາສູດທີ ໘ ຈົບ**

## ໙. ທາດສູດ

### ວ່າດ້ວຍທາດ

[໑໙໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຣາຫຸນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ປະຖະວີທາດທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ອາໂປທາດ ຯລຯ ເຕໂຊທາດ ຯລຯ ວາໂຍທາດ ຯລຯ ອາກາດທາດ ຯລຯ ວິນຍານທາດ ທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຣາຫຸນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນປະຖະວີທາດ ຯລຯ ຍ່ອມເບື່ອໜ່າຍແມ່ນໃນອາໂປທາດ ຯລຯ ຍ່ອມເບື່ອໜ່າຍແມ່ນໃນເຕໂຊທາດ ຯລຯ ຍ່ອມເບື່ອໜ່າຍແມ່ນໃນວາໂຍທາດ ຯລຯ ຍ່ອມເບື່ອໜ່າຍແມ່ນໃນອາກາສທາດ ຯລຯ ຍ່ອມເບື່ອໜ່າຍແມ່ນໃນວິນຍານທາດ ຯລຯ ຮູ້ແຈ້ງວ່າ ຯລຯ

**ທາດສູດທີ ໙ ຈົບ**

## ໑໐. ຂັນທະສູດ

### ວ່າດ້ວຍຂັນ

[໑໙໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຣາຫຸນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານທັງຫຼາຍ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ຣາຫຸນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຯລຯ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນສັນຍາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນສັງຂານທັງຫຼາຍ ຯລຯ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ຂັນທະສູດທີ ໑໐ ຈົບ**

**ປະຖົມວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໔. ທຸຕິຍະວັກ

## ໝວດທີ ໔

## ໑. ຈັກຂຸສູດ

### ວ່າດ້ວຍຈັກຂຸ

[໑໙໗] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ທ່ານພຣະຣາທຸນໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານພຣະຣາທຸນດັ່ງນີ້ ວ່າ

ຣາທຸນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຈັກຂຸທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ

ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ໂສຕະ ຯລຯ ຄານະ ຯລຯ ຊິວຫາ ຯລຯ ກາຍ ຯລຯ ມະໂນທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ

ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ຣາຫຸນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຯລຯ ຍ່ອມເບື່ອໜ່າຍແມ່ນໃນໂສຕະ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຄານະ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຊິວຫາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນກາຍ ຯລຯ ຍ່ອມເບື່ອໜ່າຍແມ່ນໃນມະໂນ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນ ເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**(ເພິ່ງຫຍໍ້ພຣະສູດທັງ ໑໐ ແນວນີ້)**

**ຈັກຂຸສູດທີ ໑ ຈົບ**

# ໔-໑໐. ຣູປາທິສຸດຕະນະວະກະ

## ວ່າດ້ວຍພຣະສູດ ໙ ສູດມີຣູບສູດເປັນຕົ້ນ

[໑໙໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຣາຫຸນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າ ແນວໃດ ຣູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ທຳມາຣົມ ຯລຯ

**ສູດທີ ໔ ຈົບ**

ຈັກຂຸວິນຍານ ຯລຯ ໂສຕະວິນຍານ ຯລຯ ຄານະວິນຍານ ຯລຯ ຊິວຫາວິນຍານ ຯລຯ ກາຍວິນຍານ ຯລຯ ມະໂນວິນຍານ ຯລຯ

**ສູດທີ ໓ ຈົບ**

ຈັກຂຸສຳຜັດ ຯລຯ ໂສຕະສຳຜັດ ຯລຯ ຄານະສຳຜັດ ຯລຯ ຊິວຫາສຳຜັດ ຯລຯ ກາຍສຳຜັດ ຯລຯ ມະໂນສຳຜັດ ຯລຯ

**ສູດທີ ໔ ຈົບ**

ຈັກຂຸສຳຜັດສະຊາເວທະນາ ຯລຯ ໂສຕະສຳຜັດສະຊາເວທະນາ ຯລຯ ຄານະສຳຜັດສະຊາເວທະນາ ຯລຯ ຊິວຫາສຳຜັດສະຊາເວທະນາ ຯລຯ ກາຍສຳຜັດສະຊາເວທະນາ ຯລຯ ມະໂນສຳຜັດສະຊາເວທະນາ ຯລຯ

**ສູດທີ ໕ ຈົບ**

ຮູບສັນຍາ ຯລຯ ສັດທະສັນຍາ ຯລຯ ຄັນທະສັນຍາ ຯລຯ ຣະສະສັນຍາ ຯລຯ ໂຜດຖັບພະສັນຍາ ຯລຯ ທຳມະສັນຍາ ຯລຯ

**ສູດທີ ໖ ຈົບ**

ຮູບສັນເຈຕະນາ (ຄວາມຈຳນົງຮູບ) ຯລຯ ສັທທະສັນເຈຕະນາ (ຄວາມຈຳນົງສຽງ) ຯລຯ ຄັນທະສັນເຈຕະນາ (ຄວາມຈຳນົງກິ່ນ) ຯລຯ ຣົດສັນເຈຕະນາ (ຄວາມຈຳນົງຣົດ) ຯລຯ ໂຜຕທັບພະສັນເຈຕະນາ (ຄວາມຈຳນົງໂຜດຖັບພະ) ຯລຯ ທຳມະສັນເຈຕະນາ (ຄວາມຈຳນົງທຳມາຣົມ) ຯລຯ

**ສູດທີ ໗ ຈົບ**

ຮູບຕັນຫາ ຯລຯ ສັດທະຕັນຫາຯລຯ ຄັນທະຕັນຫາ ຯລຯ ຣະສະຕັນຫາ ຯລຯ ໂຜດຖັບພະຕັນຫາ ຯລຯ ທຳມະຕັນຫາ ຯລຯ

**ສູດທີ ໘ ຈົບ**

ປະຖະວີທາດ ຯລຯ ອາໂປທາດ ຯລຯ ເຕໂຊທາດ ຯລຯ ວາໂຍທາດ ຯລຯ ອາກາສທາດ ຯລຯ ວິນຍານທາດ ຯລຯ

**ສູດທີ ໙ ຈົບ**

ຣາຫຸນ ຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານທັງຫຼາຍ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ ຯລຯ

ຣາຫຸນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ຂັນທະສູດທີ ໑໐ ຈົບ**

# ໑໑. ອະນຸສະຍະສູດ

## ວ່າດ້ວຍອະນຸໄສ

[໔໐໐] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຄັ້ງນັ້ນ ທ່ານພຣະຣາຫຸນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນຮູ້ເຫັນແນວໃດ ອະຫັງການ ມະມັງການ ແລະມານານຸໄສ ຈຶ່ງບໍ່ມີໃນກາຍທີ່ມີວິນຍານຄອງນີ້ ແລະ ໃນສັບພະນິມິດພາຍນອກ

ຣາຫຸນ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນເປັນໄປພາຍໃນ ຫຼື ພາຍນອກ ຫຍາບ ຫຼື ລະອຽດ ຊົ່ວ ຫຼື ປະນີດ ຢູ່ໄກ ຫຼື ຢູ່ໃກ້ ຮູບ ທັງໝົດນັ້ນ ອະຣິຍະສາວົກເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາແນວໃດແນວໜຶ່ງ ຯລຯ ສັນຍາແນວໃດແນວໜຶ່ງ ຯລຯ ສັງຂານເຫຼົ່າໃດເຫຼົ່າໜຶ່ງ ຯລຯ

ວິນຍານແນວໃດແນວໜຶ່ງທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ເປັນໄປພາຍໃນ ຫຼື ພາຍນອກ ຫຍາບ ຫຼື ລະອຽດ ຊົ່ວ ຫຼື ປະນີດ ຢູ່ໄກ ຫຼື ຢູ່ໃກ້ ວິນຍານທັງໝົດນັ້ນ ອະຣິຍະສາວົກເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ຢ່າງນີ້ວ່ານັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ຣາຫຸນ ເມື່ອບຸກຄົນຮູ້ເຫັນແນວນີ້ ອະຫັງການ ມະມັງການແລະມານານຸໄສ ຈຶ່ງບໍ່ມີໃນກາຍທີ່ມີວິນຍານຄອງນີ້ ແລະ ໃນສັບພະນິມິດພາຍນອກ

**ອະນຸສະຍະສູດທີ ໑໑ ຈົບ**

# ໑໔. ອະປະຄະຕະສູດ

## ວ່າດ້ວຍປາສະຈາກອະຫັງການ ມະມັງການແລະມານະ

[໔໐໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ຄັ້ງນັ້ນ ທ່ານພຣະຣາທຸນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນຮູ້ເຫັນແນວໃດ ໃຈຈຶ່ງປາສະຈາກອະຫັງການ ມະມັງການແລະມານະ ໃນກາຍທີ່ມີວິນຍານຄອງນີ້ ແລະ ໃນສັບພະນິມິດພາຍນອກ ກ້າວລ່ວງສ່ວນແຫ່ງ ມານະ ສະງົບລະງັບ ລຸດພົ້ນດີແລ້ວ

ຣາທຸນ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ເປັນໄປພາຍໃນ ຫຼື ພາຍນອກ ຫຍາບ ຫຼື ລະອຽດ ຊົ່ວ ຫຼື ປະນີດ ຢູ່ໄກ ຫຼື ຢູ່ໃກ້ ຮູບ ທັງໝົດນັ້ນອະຣິຍະສາວົກເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ຢ່າງນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ເປັນຜູ້ລຸດພົ້ນຍ້ອນບໍ່ຢຶດໝັ້ນຖືໝັ້ນ

ເວທະນາແນວໃດແນວໜຶ່ງ ฯລฯ ສັນຍາແນວໃດແນວໜຶ່ງ ฯລฯ ສັງຂານເຫຼົ່າໃດ ເຫຼົ່າໜຶ່ງ ฯລฯ ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ເປັນໄປພາຍໃນ ຫຼື ພາຍນອກ ຫຍາບ ຫຼື ລະອຽດ ຊົ່ວ ຫຼື ປະນີດ ຢູ່ໄກ ຫຼື ຢູ່ໃກ້ ວິນຍານທັງໝົດນັ້ນ ອະຣິຍະສາວົກເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ຢ່າງນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ເປັນຜູ້ລຸດພົ້ນຍ້ອນບໍ່ຢຶດໝັ້ນຖືໝັ້ນ

ຣາທຸນ ເມື່ອບຸກຄົນຮູ້ເຫັນ ຢ່າງນີ້ ໃຈຈຶ່ງປາສະຈາກອະຫັງການ ມະມັງການແລະມານະໃນກາຍທີ່ມີວິນຍານຄອງນີ້ ແລະ ໃນສັພພະນິມິດພາຍນອກ ກ້າວລ່ວງສ່ວນແຫ່ງມານະ ສະງົບລະງັບ ລຸດພົ້ນດີແລ້ວ

**ອປະຄະຕະສູດທີ ໑໘ ຈົບ**

**ທຸຕິຍະວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ຈັກຂຸສູດ | ໒. ຮູບສູດ |
| ໓. ວິນຍານສູດ | ໔. ສຳຜັດສະສູດ |
| ໕. ເວທະນາສູດ | ໖. ສັນຍາສູດ |
| ໗. ສັນເຈຕະນາສູດ | ໘. ຕັນຫາສູດ |
| ໙. ທາດສູດ | ໑໐. ຂັນທະສູດ |
| ໑໑. ອະນຸສະຍະສູດ | ໑໒. ອປະຄະຕະສູດ |

**ຣາທຸນສັງຍຸດ ຈົບບໍລິບູນ**

# ໗. ລັກຂະນະສັງຍຸດ

## ໑. ປະຖົມວັກ

### ໝວດທີ ໑

## ໑. ອັດຖິສູດ

### ວ່າດ້ວຍເຜດມີແຕ່ໂຄງກະດູກ

[໔໐໔] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາດຊະຄື ສະໄໝນັ້ນ ທ່ານພຣະລັກຂະນະກັບທ່ານພຣະມະຫາໂມກຄັນລານະພັກຢູ່ເທິງພູຄິດຊະກູດ ເມື່ອເວລາເຊົ້າ ພຣະມະຫາໂມກຄັນລານະຄອງອັນຕະຣະວາສົກຖືບາດແລະຈີວອນເຂົ້າໄປຫາທ່ານພຣະລັກຂະນະຮອດບ່ອນຢູ່ ເຊີນຊວນວ່າ ທ່ານພຣະລັກຂະນະມາເທີ້ນ ພວກເຮົາຈະເຂົ້າໄປບິນທະບາດໃນເມືອງຣາດຊະຄືນຳກັນ ທ່ານພຣະລັກຂະນະຮັບຄຳແລ້ວ

ຂະນະທີ່ທ່ານພຣະມະຫາໂມກຄັນລານະກຳລັງລົງຈາກພູຄິດຊະກູດ ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການຍິ້ມ

ລຳດັບນັ້ນ ທ່ານພຣະລັກຂະນະຖາມທ່ານພຣະມະຫາໂມກຄັນລານະວ່າ ທ່ານໂມກຄັນລານະ ອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການແຍ້ມ

ທ່ານລັກຂະນະ ຍັງບໍ່ເຖິງເວລາຕອບບັນຫານີ້ ເມື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈຶ່ງຖາມບັນຫານີ້ເທີ້ນ

ຄັ້ງນັ້ນ ທ່ານພຣະລັກຂະນະ ແລະ ທ່ານພຣະມະຫາໂມກຄັນລານະ ທ່ຽວບິນທະບາດໃນເມືອງຣາດຊະຄື ກັບຈາກບິນທະບາດ ຫຼັງຈາກສັນພັດຕາຫານສຳເລັດ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ແລ້ວທ່ານພຣະລັກຂະນະ ໄດ້ກ່າວກັບທ່ານພຣະມະຫາໂມກຄັນລານະວ່າ ທ່ານມະຫາໂມກຄັນລານະ ເມື່ອທ່ານລົງຈາກພູຄິດຊະກູດ ໃນເມືອງຣາຊະຄືນີ້ເຖິງສະຖານທີ່ແຫ່ງໜຶ່ງໄດ້ສະແດງອາການແຍ້ມ ອັນໃດເປັນເຫດ ເປັນປັດໄຈໃຫ້ທ່ານສະແດງອາການຍິ້ມແນວນັ້ນນໍ?

ທ່ານຜູ້ມີອາຍຸ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນອັດຖິສັງຂະລິກເຜດ (ເຜດມີແຕ່ໂຄງກະດູກ) ລອຍຂຶ້ນສູ່ກາງອາກາດ ຝູງແຮ້ງ ຝູງກາ ຝູງແຫຼວພາກັນບິນແຊ່ອຢູ່ຂວັກໄຂວ່ ຫຸ້ມກັນຈິກຍາດແຍ່ງຊີ້ນທີ່ຕິດຢູ່ຕາມລະຫວ່າງກະດູກຂ້າງ ສະບັດໄປມາຈົນມັນຮ້ອງຄວນຄາງ ຂ້ານ້ອຍ ມີຄວາມຮູ້ສຶກວ່າ ອັດສະຈັນແທ້ນໍ ບໍ່ເຄີຍຜາກົດ ທີ່ມີສັດແບບນີ້ ມີຍັກແບບນີ້ ມີການໄດ້ອັດຕະພາບແບບນີ້ຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍ ມາດ້ວຍຕັດວ່າ ພິກຂຸທັງຫຼາຍ ສາວົກທັງຫຼາຍທີ່ມີຈັກຂຸມີຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນແບບນັ້ນ ເປັນພະຍານໄດ້ ແຕ່ກ່ອນເຮົາກໍໄດ້ເຫັນອັດຖິສັງຂະລິກເຜດນັ້ນ ແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນຈະບໍ່ເປັນປະໂຫຍດເກື້ອກູນ ຊ້ຳຈະເປັນທຸກຍາວນານ ແກ່ຜູ້ທີ່ບໍ່ເຊື່ອເຮົາ

ພິກຂຸທັງຫຼາຍ ເຜດນັ້ນ ເຄີຍເປັນຄົນຂ້າງົວໃນເມືອງຣາດຊະຄຶ ຍ້ອນຜົນກຳນັ້ນ ຈຶ່ງຕົກນະຣົກນົກໄໝ້ຢູ່ຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີແລ້ວໄດ້ມີອັດຕະພາບແບບນີ້ ຍ້ອນເສດກຳນັ້ນທີ່ຍັງເຫຼືອ

**(ພຣະສູດທຸກສູດທີ່ຫຍໍ້ໄວ້ມີຄວາມເຕັມຄືສູດນີ້)**

**ອັດຖິສູດທີ ໑ ຈົບ**

# ໔. ເປສິສູດ

## ວ່າດ້ວຍເຜດມີແຕ່ຮ່າງຕ່ອນຊີ້ນ

[໔໐໖] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນມັງສະເປຊິເຜດ (ເຜດມີແຕ່ຮ່າງຕ່ອນຊີ້ນ) ລອຍຂຶ້ນສູ່ກາງອາກາດ ຝູງແຮ້ງ ຝູງກາ ຝູງແຫຼວພາກັນບິນແຊ່ອຢູ່ຂວັກໄຂວ່ ຫຸ້ມກັນສັບ ຈິກ ກິນ ຍາດແຍ່ງເຜດນັ້ນ ສະບັດໄປມາຈົນມັນຮ້ອງຄວນຄາງ ฯລฯ

ພິກຂຸທັງຫຼາຍ ເຜດນັ້ນ ເຄີຍເປັນຄົນຂ້າງົວໃນເມືອງຣາດຊະຄຶ ฯລฯ

**ເປສິສູດທີ ໔ ຈົບ**

# ໓. ປິນດະສູດ

## ວ່າດ້ວຍເຜດຮ່າງກ້ອນຊີ້ນ

[໔໐໔] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນມັງສະປິນດະເຜດ (ເຜດຮ່າງກ້ອນຊີ້ນ) ລອຍຂຶ້ນສູ່ກາງອາກາດ ຝູງແຮ້ງ ຝູງກາ ຝູງແຫຼວພາກັນບິນແຊ່ວຢູ່ຂວັກໄຂວ່ຫຸ້ມກັນສັບ ຈິກ ກິນ ຍາດແຍ່ງເຜດນັ້ນ ສະບັດໄປມາຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດນັ້ນ ເຄີຍເປັນຄົນຂ້ານົກໃນເມືອງຣາດຊະຄື ຯລຯ

**ປິນດະສູດທີ ໓ ຈົບ**

# ໔. ນິດສະວິສູດ

## ວ່າດ້ວຍເຜດຮ່າງບໍ່ມີຜິວໜັງເພດຊາຍ

[໔໐໕] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນນິດສະວິເຜດ (ເຜດຮ່າງບໍ່ມີຜິວໜັງ) ເພດຊາຍ ລອຍຂຶ້ນສູ່ກາງອາກາດ ຝູງແຮ້ງ ຝູງກາ ຝູງແລ່ວພາກັນບິນແຊ່ວຢູ່ຂວັກໄຂວ່ຫຸ້ມກັນສັບ ຈິກ ກິນ ຍາດແຍ່ງເຜດນັ້ນ ສະບັດໄປມາຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸ ທັງຫຼາຍ ເຜດນັ້ນເຄີຍເປັນຄົນຂ້າແກະໃນເມືອງຣາດຊະຄື ຯລຯ

**ນິດສະວິສູດທີ ໔ ຈົບ**

# ໕. ອະສິໂລມະສູດ

## ວ່າດ້ວຍເຜດຮ່າງມີຂົນເປັນດາບເພດຊາຍ

[໔໐໖] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນອະຊິໂລມະເຜດ (ເຜດຮ່າງມີຂົນເປັນດາບ) ເພດຊາຍ ລອຍຂຶ້ນສູ່ກາງອາກາດ (ຂົນ) ດາບເຫຼົ່ານັ້ນ ຂອງມັນລຸດລອຍຂຶ້ນໄປແລ້ວກັບຕົກລົງທີ່ຮ່າງຂອງມັນເອງຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດນັ້ນ ເຄີຍເປັນຄົນຂ້າໝູໃນເມືອງຣາດຊະຄື ຯລຯ

**ອະສິໂລມະສູດທີ ໕ ຈົບ**

# ໖. ສັດຕະສູດ

## ວ່າດ້ວຍເຜດຮ່າງມີຂົນເປັນຫອກເພດຊາຍ

[໔໐໗] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນສັດຕິໂລມະເຜດ (ເຜດມີຂົນເປັນຫອກ) ເພດຊາຍ ລອຍຂຶ້ນສູ່ກາງອາກາດ (ຂົນ) ຫອກເຫຼົ່ານັ້ນຂອງມັນລຸດລອຍຂຶ້ນໄປແລ້ວກັບຕົກລົງມາໃສ່ຮ່າງຂອງມັນເອງຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນນາຍພານລ່າເນື້ອໃນເມືອງຣາດຊະຄຶ ຯລຯ

**ສັດຕະສູດທີ ໖ ຈົບ**

# ໗. ອຸສຸໂລມະສູດ

## ວ່າດ້ວຍເຜດຮ່າງມີຂົນເປັນລູກສອນເພດຊາຍ

[໔໐໘] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນອຸສຸໂລມະເຜດ (ເຜດຮ່າງມີຂົນເປັນລູກສອນ) ເພດຊາຍ ລອຍຂຶ້ນສູ່ກາງອາກາດ (ຂົນ) ລູກສອນເຫຼົ່ານັ້ນ ຂອງມັນລຸດລອຍຂຶ້ນໄປແລ້ວກັບຕົກລົງມາໃສ່ຮ່າງຂອງມັນເອງຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດນັ້ນ ເຄີຍເປັນເພດຊະຄາດໃນເມືອງຣາຊະຄຶ ຯລຯ

**ອຸສຸໂລມະສູດທີ ໗ ຈົບ**

# ໘. ສູຈິໂລມະສູດ

## ວ່າດ້ວຍເຜດມີຮ່າງຖືກເຂັມທິ່ມແທງເພດຊາຍ

[໔໐໙] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນສູຈິໂລມະເຜດ (ເຜດຮ່າງມີຂົນເປັນເຂັມ) ເພດຊາຍ ລອຍຂຶ້ນສູ່ກາງອາກາດ (ຂົນ) ເຂັມເຫຼົ່ານັ້ນຂອງມັນລຸດລອຍຂຶ້ນໄປແລ້ວກັບຕົກລົງມາໃສ່ຮ່າງຂອງມັນເອງຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດນັ້ນເຄີຍເປັນນາຍສາຣະຖີໃນເມືອງຣາດຊະຄຶ ຯລຯ

**ສູຈິໂລມະສູດທີ ໘ ຈົບ**

# ໙. ທຸຕິຍະສູຈິໂລມະສູດ
## ວ່າດ້ວຍເຜດມີຮ່າງຖືກເຂັມທິ່ມແທງເພດຊາຍ ສູດທີ ໙

[໔໑໐] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນສູຈິເຜດ (ເຜດຮ່າງຖືກເຂັມທິ່ມແທງ) ເພດຊາຍ ລອຍຂຶ້ນສູ່ກາງອາກາດ ເຂັມເຫຼົ່ານັ້ນ ແທງເຂົ້າໄປໃນຫົວຂອງມັນຊອດອອກທາງປາກ ແທງເຂົ້າໄປໃນປາກ ຊອດອອກທາງເອິກ ແທງເຂົ້າໄປໃນເອິກ ຊອດອອກທາງທ້ອງ ແທງເຂົ້າໄປໃນທ້ອງ ຊອດອອກທາງຂາອ່ອນທັງ ໒ ແທງເຂົ້າໄປໃນຂາອ່ອນຊອດອອກທາງແຂ່ງ ທັງ ໒ ແທງເຂົ້າໄປໃນແຂ່ງ ຊອດອອກທາງຕີນທັງ ໒ ຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດນັ້ນ ເຄີຍເປັນຄົນເວົ້າສັບສໍ່ໃນເມືອງຣາດຊະຄຶ ຯລຯ

**ທຸຕິຍະສູຈິໂລມະສູດທີ ໙ ຈົບ**

# ໑໐. ກຸມພັນທະສູດ
## ວ່າດ້ວຍເຜດມີອັນທະໃຫຍ່ທີ່ໝໍ້

[໔໑໑] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນກຸມພັນຖະເຜດ (ເຜດອັນທະໃຫຍ່ທີ່ໝໍ້) ເພດຊາຍລອຍຂຶ້ນສູ່ກາງອາກາດ ເມື່ອເຜດນັ້ນ ຍ່າງໄປກໍຍົກອັນທະ ເຫຼົ່ານັ້ນຂຶ້ນພາດໄວ້ເທິງບ່າ ເມື່ອນັ່ງກໍນັ່ງເຕັງອັນທະເຫຼົ່ານັ້ນ ຝູງແຮ້ງ ຝູງກາ ຝູງແລ່ວ ພາກັນບິນແຊ່ວຢູ່ຂວັກໄຂວ່ ຫຸ້ມກັນສັບ ຈິກ ກິນ ຍາດແຍ່ງເຜດນັ້ນ ສະບັດໄປມາຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດນັ້ນ ເຄີຍເປັນຜູ້ພິພາກສາໂກງຊາວບ້ານໃນເມືອງຣາດຊະຄຶ ຯລຯ

**ກຸມພັນທະສູດທີ ໑໐ ຈົບ**

**ປະຖົມວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ອັດຖິສູດ | ໒. ເປສິສູດ |
| ໓. ປິນດະສູດ | ໔. ນິດສະວິສູດ |
| ໕. ອະສິໂລມະສູດ | ໖. ສັດຕະສູດ |
| ໗. ອຸສຸໂລມະສູດ | ໘. ສູຈິໂລມະສູດ |
| ໙. ທຸຕິຍະສູຈິໂລມະສູດ | ໑໐. ກຸມພັນທະສູດ |

# ໔. ທຸຕິຍະວັກ

## ໝວດທີ ໔

## ໑. ສະສີສະກະສູດ

### ວ່າດ້ວຍເຜດຈົມຊຸມຄູດຖ້ວມຫົວເພດຊາຍ

[໔໑໔] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາດຊະຄຶ ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນເຜດຈົມຊຸມຄູດຈົນຖ້ວມຫົວເພດຊາຍ ຯລຯ

ພິກຂຸ ທັງຫຼາຍ ເຜດນັ້ນ ເຄີຍເປັນຊູ້ກັບພັນລະຍາຂອງຜູ້ອື່ນໃນເມືອງຣາດຊະຄຶ ຯລຯ

**ສະສີສະກະສູດທີ ໑ ຈົບ**

## ໔. ຄູຖະຂາທະສູດ

### ວ່າດ້ວຍເຜດກິນຄູດເພດຊາຍ

[໔໑໕] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນເຜດຜູ້ຈົມຊຸມຄູດຖ້ວມຫົວກຳລັງໃຊ້ມືທັງ ໒ ກອບຄູດກິນເພດຊາຍ ຯລຯ

ພິກຂຸທັງຫຼາຍ ເຜດນັ້ນ ເຄີຍເປັນພາມໃນເມືອງຣາດຊະຄຶ ພາມນັ້ນ ນິມົນພຣະພິກຂຸສົງໃນພຣະສາດສະໜາຂອງພຣະກັດສະປະ ສຳມາສຳພຸດທະເຈົ້າ ໃຫ້ສັນພັດຕາຫານແລ້ວ ເທຄູດລົງໃສ່ຮາງຈົນເຕັມ ສັ່ງໃຫ້ຄົນບອກເວລາອາຫານວ່າ ຂໍທ່ານຜູ້ຈະເລີນທັງຫຼາຍ ຈົ່ງສັນອາຫານແລະນຳໄປໃຫ້ພໍແກ່ຄວາມຕ້ອງການເທີ້ນ ຯລຯ

**ຄູຖະຂາທະສູດທີ ໔ ຈົບ**

# ៣. ນິດສະວິດຖີສູດ

## ວ່າດ້ວຍເຜດຮ່າງບໍ່ມີຜິວໜັງເພດຍິງ

[໔໑໔] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນນິດສະວິເຜດເພດຍິງລອຍຂຶ້ນສູ່ກາງອາກາດ ຝູງແຮ້ງ ຝູງກາ ຝູງແລ່ວພາກັນບິນແຊ່ວຢູ່ຂວັກໄຂວ່ ຫຸ້ມກັນສັບ ຈິກ ກິນ ຍາດແຍ່ງເຜດນັ້ນ ສະບັດໄປມາຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດຍິງຕົນນັ້ນ ເຄີຍປະພຶດນອກໃຈສາມີໃນເມືອງຣາດຊະຄຶ ຯລຯ

**ນິດສະວິດຖີສູດທີ ៣ ຈົບ**

# ៤. ມັງຄຸລິດຖີສູດ

## ວ່າດ້ວຍເຜດຮູບຮ່າງໜ້າກຽດຊັງເພດຍິງ

[໔໑໕] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນມັງຄຸລິເຜດກິ່ນເໝັນເພດຍິງລອຍຂຶ້ນສູ່ກາງອາກາດ ຝູງແຮ້ງ ຝູງກາ ຝູງແຫຼວພາກັນບິນແຊ່ວຢູ່ຂວັກໄຂວ່ ຫຸ້ມກັນສັບ ຈິກກິນ ຍາດແຍ່ງເຜດນັ້ນ ສະບັດໄປມາຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດຍິງຕົນນັ້ນ ເຄີຍເປັນແມ່ມົດໃນເມືອງຣາດຊະຄຶ ຯລຯ

**ມັງຄຸລິດຖີສູດທີ ៤ ຈົບ**

# ໕. ໂອກິລິນີສູດ

## ວ່າດ້ວຍເຜດຮ່າງຖືກໄຟລວກເພດຍິງ

[໔໑໖] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນໂອກິລິນີເຜດເພດຍິງຖືກຖ່ານໄຟເຜົາຮອບໂຕຈົນສຸກເປື່ອຍ ຍາດນ້ຳໄຫຼຍ້ອຍລົງ ລອຍຂຶ້ນສູ່ກາງອາກາດຈົນ ມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດຍິງຕົນນັ້ນ ເຄີຍເປັນພຣະອັກຄະຣະມະເຫສີຂອງພຣະເຈົ້າກາລິງຄະນາງຫວງສາມີ ເອົາກະທະມີຖ່ານໄຟໂພະໃສ່ຍິງຮ່ວມສາມີ ຯລຯ

**ໂອກິລິນີສູດທີ ໕ ຈົບ**

# ໖. ອະສີສະກະສູດ

## ວ່າດ້ວຍເຜດທີ່ວຂາດ

[໔໑໗] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນອະສີສະກະພັນທະເຜດລອຍຂຶ້ນສູ່ກາງອາກາດ ຕາແລະປາກຂອງມັນຢູ່ທີ່ເອິກ ຝູງແຮ້ງ ຝູງກາ ຝູງແຫຼວພາກັນບິນແຊ່ວຢູ່ຂວັກໄຂວ່ ຫຸ້ມກັນສັບ ຈິກ ກິນ ຍາດແຍ່ງເຜດນັ້ນ ສະບັດໄປມາຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດນັ້ນ ເຄີຍເປັນເພດຊະຄາດຂ້າໂຈນຊື່ ຫາຣິກະໃນເມືອງຣາດຊະຄື ຯລຯ

**ອະສີສະກະສູດທີ ໖ ຈົບ**

# ໗. ປາປະພິກຂຸສູດ

## ວ່າດ້ວຍເຜດມີຮູບເປັນພິກຂຸຊົ່ວ

[໔໑໘] ທ່ານ ເມື່ອຂ້ານ້ອຍລົງຈາກພູຄິດຊະກູດ ໄດ້ເຫັນພິກຂຸເຜດລອຍຂຶ້ນສູ່ກາງອາກາດ ສັງຄາຕິ ບາດ ສາຍແອວ ແລະ ຮ່າງກາຍຂອງມັນ ຖືກໄຟໄໝ້ລຸກເປັນແປວຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດນັ້ນ ເຄີຍເປັນພິກຂຸຊົ່ວໃນພຣະສາດສະໜາຂອງພຣະກັດສະປະສຳມາສຳພຸດທະເຈົ້າ ຯລຯ

**ປາປະພິກຂຸສູດທີ ໗ ຈົບ**

# ໘. ປາປະພິກຂຸນີສູດ

## ວ່າດ້ວຍເຜດມີຮູບເປັນພິກຂຸນີຊົ່ວ

[໔໑໙] ໄດ້ເຫັນພິກຂຸນີເຜດລອຍຂຶ້ນສູ່ກາງອາກາດ ສັງຄາຕິຂອງມັນຖືກໄຟໄໝ້ລຸກເປັນແປວ ຯລຯ

**ປາປະພິກຂຸນີສູດທີ ໘ ຈົບ**

# ໙. ປາປະສິກຂະມານາສູດ

## ວ່າດ້ວຍເຜດມີຮູບເປັນສິກຂະມານາຊົ່ວ

[໔໔໐] ໄດ້ເຫັນສິກຂະມານາເຜດລອຍຂຶ້ນສູ່ກາງອາກາດ ສັງຄາຕິຂອງມັນຖືກໄຟໄໝ້ລຸກເປັນແປວ ຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດນັ້ນ ເຄີຍເປັນສິກຂະມານາຊົ່ວ ຯລຯ

**ປາປະສິກຂະມານາສູດທີ ໙ ຈົບ**

# ໑໐. ປາປະສາມະເນນສູດ

## ວ່າດ້ວຍເຜດມີຮູບເປັນສາມະເນນຊົ່ວ

[໔໔໑] ໄດ້ເຫັນສາມະເນນເຜດລອຍຂຶ້ນສູ່ກາງອາກາດ ສັງຄາຕິຂອງມັນຖືກໄຟໄໝ້ລຸກເປັນແປວ ຈົນມັນຮ້ອງຄວນຄາງ ຯລຯ

ພິກຂຸທັງຫຼາຍ ເຜດນັ້ນ ເຄີຍເປັນສາມະເນນຊົ່ວ ຯລຯ

**ປາປະສາມະເຂນສູດທີ ໑໐ ຈົບ**

# ໑໑. ປາປະສາມະເນຣີສູດ

## ວ່າດ້ວຍເຜດມີຮູບເປັນສາມະເນຣີຊົ່ວ

[໔໔໔] ທ່ານ ເມື່ອຂ້ານ້ອຍລົງມາຈາກພູຄິດຊະກູດ ໄດ້ເຫັນສາມະເນຣີເຜດລອຍຂຶ້ນສູ່ກາງອາກາດ ສັງຄາຕິ ບາດ ສາຍແອວ ແລະ ຮ່າງກາຍຂອງມັນ ຖືກໄຟໄໝ້ລຸກເປັນແປວຈົນມັນຮ້ອງຄວນຄາງ ຂ້ານ້ອຍມີຄວາມຮູ້ສຶກວ່າ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ມີສັດແນວນີ້ ມີຍັກແນວນີ້ ມີການໄດ້ອັດຕະພາບແນວນີ້ຢູ່ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍ ມາດ້ວຍຕັດວ່າ ພິກຂຸທັງຫຼາຍ ສາວົກທັງຫຼາຍທີ່ມີຈັກຂຸມີຍານກໍຍັງມີຢູ່ ຍ້ອນສາວົກທີ່ຮູ້ທີ່ເຫັນນີ້ເປັນພະຍານໄດ້ ແຕ່ກ່ອນເຮົາກໍເຫັນສາມະເນຣີເຜດນັ້ນ ແຕ່ບໍ່ພະຍາກອນ ຍ້ອນການພະຍາກອນນັ້ນ ຈະບໍ່ເປັນປະໂຫຍດເກື້ອກູນ ຊ້ຳຈະເປັນທຸກຍາວນານແກ່ຜູ້ທີ່ບໍ່ເຊື່ອເຮົາ

ພິກຂຸທັງຫຼາຍ ເພດນັ້ນ ເຄີຍເປັນສາມະເນຣີຊົ່ວໃນພຣະສາດສະໜາຂອງພຣະກັດສະປະສຳມາ ສຳພຸດທະເຈົ້າ ຍ້ອນຜົນກຳນັ້ນ ສາມະເນຣີນັ້ນ ຈຶ່ງຕົກນະຮົກມົກໄໝ້ຢູ່ຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີແລ້ວ ໄດ້ຮັບອັດຕະພາບແນວນີ້ ຍ້ອນເສດກຳນັ້ນ ທີ່ຍັງເຫຼືອ

**ປາປະສາມະເນຣີສູດທີ ໑໑ ຈົບ**

**ທຸຕິຍະວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



**ລັກຂະນະສັງຍຸດ ຈົບບໍລິບູນ**

# ໙. ໂອປໍາມະສັງຍຸດ

## ໑. ກູຕະສູດ

### ວ່າດ້ວຍເຮືອນຍອດ

[໔໔໓] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ໆລໆ

ພິກຂຸທັງຫຼາຍ ກອນເຮືອນຍອດແນວໃດແນວໜຶ່ງ ກອນເຮືອນຍອດເຫຼົ່ານັ້ນທັງໝົດໄປລວມຢູ່ເທິງຍອດ ເມື່ອຮື້ຍອດເຮືອນອອກ ກອນເຫຼົ່ານັ້ນທັງໝົດ ຍ່ອມຖືກຮື້ອອກນໍາ ສັນໃດ

ອະກຸສົນທໍາເຫຼົ່າໃດເຫຼົ່າໜຶ່ງ ອະກຸສົນທໍາເຫຼົ່ານັ້ນທັງໝົດ ລ້ວນມີອະວິດຊາ ເປັນມູນມີອະວິດຊາເປັນແຫລ່ງລວມ ເມື່ອອະວິດຊາຖືກຖອນ ອະກຸສົນທໍາເຫຼົ່ານັ້ນທັງໝົດຍ່ອມເຖິງການເພີກຖອນອອກນໍາ ສັນນັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍ ຈັກເປັນຜູ້ບໍ່ຜະໝາດຢູ່ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ກູດສູດທີ ໑ ຈົບ**

## ໒. ນະຂະສິຂະສູດ

### ວ່າດ້ວຍຝຸ່ນຕິດປາຍເລັບ

[໔໔໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໆລໆ ເຂດເມືອງສາວັດຖີ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງໃຊ້ປາຍພຣະນະຂາຕັກຝຸ່ນຂຶ້ນມານອນໜຶ່ງແລ້ວຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າ ແນວໃດຄື ຝຸ່ນນອຍໜຶ່ງທີ່ເຮົາໃຊ້ປາຍເລັບຕັກຂຶ້ນມານີ້ ກັບມະຫາປະຖະພີນີ້ ແນວໃດຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ມະຫາປະຖະພີນີ້ມີຫຼາຍກວ່າ ຝຸ່ນນອນໜຶ່ງທີ່ພຣະອົງຊົງໃຊ້ປາຍພຣະນະຂາຕັກຂຶ້ນມານີ້ມີປະລິມານໜ້ອຍ ເມື່ອທຽບກັບມະຫາປະຖະພີແລ້ວ ຝຸ່ນທີ່ພຣະອົງຊົງໃຊ້ປາຍພຣະນະຂາຕັກຂຶ້ນມາມີພຽງເລັກໜ້ອຍ ນັບບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ

ແມ່ນສັນໃດ ເຫຼົ່າສັດທີ່ກັບມາເກີດໃນໝູ່ມະນຸດມີໜ້ອຍ ເຫຼົ່າສັດທີ່ໄປເກີດໃນກຳເນີດອື່ນນອກຈາກມະນຸດມີຫຼາຍກວ່າ ກໍສັນນັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍຈັກເປັນຜູ້ບໍ່ຜະໝາດຢູ່ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ນະຂະສິຂະສູດທີ ໘ ຈົບ**

# ໙. ກຸລະສູດ

## ວ່າດ້ວຍຕະກູນ

[໘໘໕] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຯລຯ

ພິກຂຸທັງຫຼາຍ ຕະກູນເຫຼົ່າໃດເຫຼົ່າໜຶ່ງ ມີສະຕີຫຼາຍ ມີບຸຣຸດໜ້ອຍ ຕະກູນເຫຼົ່ານັ້ນຍ່ອມຖືກພວກໂຈນຜູ້ໃຊ້ໝໍ້ເປັນເຄື່ອງມືປຸ້ນໄດ້ງ່າຍ ສັນໃດ ເມດຕາເຈໂຕວິມຸດຕິ ທີ່ພິກຂຸອົງໃດອົງໜຶ່ງບໍ່ຈະເລີນແລ້ວ ບໍ່ເຮັດໃຫ້ຫຼາຍແລ້ວ ພິກຂຸອົງນັ້ນ ຍ່ອມຖືກພວກອະມະນຸດກຳຈັດໄດ້ງ່າຍ ສັນນັ້ນ

ຕະກູນເຫຼົ່າໃດເຫຼົ່າໜຶ່ງ ມີສະຕີໜ້ອຍ ມີບຸຣຸດຫຼາຍ ຕະກູນເຫຼົ່ານັ້ນ ຍ່ອມຖືກພວກໂຈນຜູ້ໃຊ້ໝໍ້ເປັນເຄື່ອງມືປຸ້ນໄດ້ຍາກ ສັນໃດ ເມດຕາເຈໂຕວິມຸດຕິທີ່ພິກຂຸອົງໃດອົງໜຶ່ງ ຈະເລີນແລ້ວເຮັດໃຫ້ຫຼາຍແລ້ວ ພິກຂຸອົງນັ້ນ ຍ່ອມຖືກພວກອະມະນຸດກຳຈັດໄດ້ຍາກ ສັນນັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍຈັກຈະເລີນເມດຕາເຈໂຕວິມຸດຕິ ຈັກເຮັດໃຫ້ຫຼາຍ ເຮັດໃຫ້ເປັນຄືຍານ ເຮັດໃຫ້ເປັນທີ່ຕັ້ງ ເຮັດໃຫ້ຕັ້ງໝັ້ນ ສັ່ງສົມ ຜາຣົບດີ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້

**ກຸລະສູດທີ ໙ ຈົບ**

# ໔. ໂອກຂາສູດ

## ວ່າດ້ວຍການໃຫ້ທານ

[໘໘໖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ບຸກຄົນໃດເພິ່ງໃຫ້ທານປະມານ ໑໐໐ ໝໍ້ໃຫຍ່ໃນເວລາເຊົ້າ ບຸກຄົນໃດເພິ່ງໃຫ້ທານປະມານ ໑໐໐ ໝໍ້ໃຫຍ່ໃນເວລາທ່ຽງ ບຸກຄົນໃດເພິ່ງໃຫ້ທານປະມານ ໑໐໐ ໝໍ້ໃຫຍ່ໃນເວລາຄ່ຳ ບຸກຄົນໃດເພິ່ງຈະເລີນເມດຕາຈິດໃນເວລາເຊົ້າ ຢ່າງໜ້ອຍ ພຽງຂະນະການຢືດນ້ຳນົມງົວ ບຸກຄົນໃດເພິ່ງຈະເລີນເມດຕາຈິດໃນເວລາທ່ຽງ ຢ່າງໜ້ອຍພຽງ ຂະນະການຢືດນ້ຳນົມງົວ ຫຼື ບຸກຄົນໃດເພິ່ງຈະເລີນເມດຕາຈິດໃນເວລາຄ່ຳ ຢ່າງໜ້ອຍພຽງຂະນະການຢືດນ້ຳນົມງົວ ການຈະເລີນເມດຕາຈິດນີ້ມີຜົນຫຼາຍກວ່າທານທີ່ບຸກຄົນໃຫ້ແລ້ວ ໓ ຄັ້ງ ໃນມື້ໜຶ່ງນັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍຈັກຈະເລີນ ເມດຕາເຈໂຕວິມຸດຕິ ຈັກເຮັດໃຫ້ຫຼາຍ ເຮັດໃຫ້ເປັນຄືຍານ ເຮັດໃຫ້ເປັນທີ່ຕັ້ງ ເຮັດໃຫ້ຕັ້ງໝັ້ນ ສັ່ງສົມ ຜາຣິບດີ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້

**ໂອກຂາສູດທີ່ ໔ ຈົບ**

# ໕. ສັດຕະສູດ

## ວ່າດ້ວຍຫອກ

[໘໘໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ຫອກທີ່ມີໃບຄົມ ຖ້າບຸຣຸດເພິ່ງມາກ່າວວ່າ ເຮົາຈັກເອົາຝາມື ຫຼື ກຳມື ງໍ ພັບ ມ້ວນ ຫອກທີ່ມີໃບຄົມ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນ ຜູ້ສາມາດຈະເອົາຝາມື ຫຼື ກຳມື ງໍ ພັບ ມ້ວນ ຫອກທີ່ມີໃບຄົມນັ້ນໄດ້ຫຼືບໍ່?

ເປັນໄປບໍ່ໄດ້ ຂ້ານ້ອຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນວ່າການທີ່ຈະເອົາຝາມື ຫຼື ກຳມື ງໍ ພັບ ມ້ວນ ຫອກທີ່ມີໃບຄົມນັ້ນ ເຮັດບໍ່ໄດ້ງ່າຍ ແລະ ບຸຣຸດນັ້ນ ເພິ່ງໄດ້ຮັບຄວາມອິດເມື່ອຍລຳບາກຢ່າງດຽວ ສັນໃດ

ພິກຂຸທັງຫຼາຍ ເມດຕາເຈໂຕວິມຸດຕິທີ່ພິກຂຸອົງໃດອົງໜຶ່ງຈະເລີນ ເຮັດໃຫ້ຫຼາຍ ເຮັດໃຫ້ເປັນຄືຍານ ເຮັດໃຫ້ເປັນທີ່ຕັ້ງ ເຮັດໃຫ້ຕັ້ງໝັ້ນ ສັ່ງສົມ ຜາຣົບດີ ຖ້າອະມະນຸດຈະເພິ່ງບັນດານຈິດຂອງພິກຂຸນັ້ນ ໃຫ້ຟຸ້ງຊ່ານ ອະມະນຸດນັ້ນ ເພິ່ງໄດ້ຮັບຄວາມອິດເມື່ອຍ ລຳບາກ ສັນນັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍຈັກຈະເລີນເມດຕາເຈໂຕວິມຸດຕິ ຈັກເຮັດໃຫ້ຫຼາຍ ເຮັດໃຫ້ເປັນຄືຍານ ເຮັດໃຫ້ເປັນທີ່ຕັ້ງ ເຮັດໃຫ້ຕັ້ງໝັ້ນ ສັ່ງສົມ ຜາຣົບດີ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ສັດຕະສູດທີ ໕ ຈົບ**

# ໖. ທະນຸກຄະຫະສູດ

## ວ່າດ້ວຍການຈັບລູກທະນູ

[໔໔໗] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ປຽບຄື ນາຍຂະມັງທະນູ ໔ ຄົນ ຜູ້ຍິງທະນູໄດ້ແມ່ນຍຳສຶກສາມາດີແລ້ວ ຜູ້ຊ່ຽວຊານຊ່ຳຊອງເຝິກຊ້ອມມາດີຢືນຢູ່ໃນທິດທັງ ໔ ຖ້າບຸຣຸດເພິ່ງມາກ່າວວ່າ ເຮົາຈັກຈັບລູກທະນູທີ່ນາຍຂະມັງທະນູ ໔ ຄົນ ຜູ້ຍິງທະນູແມ່ນຍຳສຶກສາມາດີແລ້ວ ຜູ້ຊ່ຽວຊານຊ່ຳຊອງເຝິກຊ້ອມມາດີຍິງມາຈາກທິດທັງ ໔ ບໍ່ໃຫ້ຕົກເຖິງພື້ນດິນນຳມາ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄວນຈະກ່າວໄດ້ບໍ່ວ່າ ບຸຣຸດຜູ້ນີ້ມີຄວາມໄວ ປະກອບດ້ວຍຄວາມໄວຢ່າງຍອດຢ້ຽມ

ຂ້າແດ່ ພຣະອົງຜູ້ຈະເລີນ ພຽງແຕ່ບຸຣຸດຈັບລູກທະນູທີ່ນາຍຂະມັງທະນູຄົນດຽວຜູ້ຍິງທະນູແມ່ນຍຳສຶກສາມາດີແລ້ວ ຜູ້ຊ່ຽວຊານຊ່ຳຊອງເຝິກຊ້ອມມາດີຍິງມາ ບໍ່ໃຫ້ຕົກເຖິງພື້ນດິນນຳມາທໍ່ນັ້ນ ກໍຄວນກ່າວໄດ້ວ່າ ບຸຣຸດຜູ້ມີຄວາມໄວ ປະກອບດ້ວຍຄວາມໄວທີ່ປະເສີດ ບໍ່ຕ້ອງກ່າວເຖິງນາຍຂະມັງທະນູທັງ ໔ ຄົນຜູ້ຍິງທະນູໄດ້ແມ່ນຍຳສຶກສາມາດີແລ້ວ ຜູ້ຊ່ຽວຊານຊ່ຳຊອງເຝິກຊ້ອມມາດີເລີຍ

ປຽບຄື ຄວາມໄວຂອງດວງຈັນ ແລະດວງອາທິດໄວກວ່າຄວາມໄວຂອງບຸຣຸດນັ້ນ ຄວາມໄວຂອງເທວະດາທີ່ໄປຂ້າງໜ້າດວງຈັນ ແລະດວງອາທິດໄວກວ່າຄວາມໄວຂອງບຸຣຸດ ແລະຂອງດວງຈັນ ແລະດວງອາທິດ ສັນນັ້ນ

ປຽບຄື ອາຍຸສັງຂານສິ້ນໄປໄວຍິ່ງກວ່າຄວາມໄວຂອງບຸຣຸດ ຄວາມໄວຂອງດວງຈັນແລະດວງອາທິດ ຄວາມໄວຂອງເທວະດາທີ່ໄປຂ້າງໜ້າດວງຈັນ ແລະດວງອາທິດເຫຼົ່ານັ້ນ ສັນນັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍ ຈັກເປັນຜູ້ບໍ່ຜະໝາດຢູ່ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ທະນຸກຄະຫະສູດທີ ໖ ຈົບ**

# ໗. ອານີສູດ

## ວ່າດ້ວຍຫຼິ້ມ

[໔໔໙] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ໄດ້ມີກອງຕະໂພນຊື່ ອານະກະຂອງພວກກະສັດຜູ້ມີພຣະນາມວ່າດ ສານະຫະ ເມື່ອກອງຕະໂພນແຕກ ພວກກະສັດຜູ້ມີພຣະນາມວ່າ ສານະຫະໄດ້ຕອກຫຼິ້ມອື່ນລົງໄປ ຕໍ່ມາໄມ້ໂຄງເກົ່າຂອງກອງຕະໂພນຊື່ ອານະກະກໍຫາຍໄປເຫຼືອແຕ່ໂຄງຫຼິ້ມສັນໃດ

ພິກຂຸທັງຫຼາຍ ໃນອະນາຄົດ ເມື່ອຜູ້ອື່ນກ່າວສູດທີ່ຕະຖາຄົດກ່າວໄວ້ລ້ຳເລິກ ມີເນື້ອຄວາມເລິກເຊິ່ງ ເປັນໂລກຸດຕະຣະທຳ ປະກອບດ້ວຍຄວາມວ່າງ ພິກຂຸທັງຫຼາຍ ຈັກບໍ່ຕັ້ງໃຈຟັງໃຫ້ດີ ບໍ່ງ່ຽງຫູຟັງ ບໍ່ເຂົ້າໄປຕັ້ງຈິດໄວ້ເພື່ອຮູ້ທົ່ວເຖິງ ແລະ ບໍ່ໃຫ້ຄວາມສຳຄັນທຳວ່າ ຄວນຮຽນຄວນທ່ອງຈຳໃຫ້ຂຶ້ນໃຈ ສັນນັ້ນ

ແຕ່ເມື່ອຜູ້ອື່ນກ່າວສູດທີ່ທ່ານຜູ້ຊ່ຽວຊານໄດ້ຣິດຈະນາໄວ້ ເປັນບົດກະວີ ມີອັກສອນວິຈິດມີພະຍັນຊະນະວິຈິດ ຢູ່ພາຍນອກ ເປັນສາວົກພາສິດ ພິກຂຸເຫຼົ່ານັ້ນກັບຕັ້ງໃຈຟັງດ້ວຍດີ ງ່ຽງຫູຟັງ ເຂົ້າໄປຕັ້ງຈິດໄວ້ເພື່ອຮູ້ທົ່ວເຖິງ ແລະ ຈັກສຳຄັນທຳວ່າ ຄວນຮຽນ ຄວນທ່ອງຈຳ ໃຫ້ຂຶ້ນໃຈສັນໃດ ແຕ່ເມື່ອຜູ້ອື່ນກ່າວສູດທີ່ຕະຖາຄົດກ່າວໄວ້ລ້ຳເລິກ ມີເນື້ອຄວາມເລິກເຊິ່ງ ເປັນໂລກຸດຕະຣະທຳ ປະກອບດ້ວຍຄວາມວ່າງ ກໍຈັກອັນຕະຣະທານຫາຍໄປ ສັນນັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງສຶກສາແນວນີ້ວ່າ ເມື່ອຜູ້ອື່ນ ກ່າວສູດທີ່ຕະຖາຄົດກ່າວໄວ້ລ້ຳເລິກ ມີເນື້ອຄວາມເລິກເຊິ່ງ ເປັນໂລກຸດຕະຣະທຳ ປະກອບດ້ວຍຄວາມວ່າງ ເຮົາທັງຫຼາຍຈັກຕັ້ງໃຈຟັງດ້ວຍດີ ງ່ຽງຫູຟັງ ເຂົ້າໄປຕັ້ງຈິດໄວ້ເພື່ອຮູ້ທົ່ວເຖິງ ແລະໃຫ້ຄວາມສຳຄັນທຳວ່າ ຄວນຮຽນ ຄວນທ່ອງຈຳໃຫ້ຂຶ້ນໃຈ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້

**ອານີສູດທີ ໗ ຈົບ**

# ໗. ກະລິງຄະຣະສູດ

## ວ່າດ້ວຍໝອນຖ່ອນໄມ້

[໔໖໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດເມືອງເວສາລີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍ ມາດ້ວຍຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ໃນປັດຈຸບັນພວກກະສັດລິດສະຫວີ ຊົງໃຊ້ໝອນໄມ້ໜຸນພຣະສຽນແລະພຣະບາດ ເປັນຜູ້ບໍ່ຜະໝາດ ມີຄວາມພຽນໃນການສຶກສາສິລະປະ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ກະສັດແຄວ້ນມະຄົດ ບໍ່ຊົງໄດ້ປ່ອງ ໄດ້ໂອກາດຂອງກະສັດລິດສະຫວີເຫຼົ່ານັ້ນ

ແຕ່ໃນອະນາຄົດ ພວກກະສັດລິດສະຫວີຈັກເປັນກະສັດສຸຂຸມານຊາດ ມີຝາພຣະຫັດແລະພຣະບາດອ່ອນນຸ່ມ ບັນທົມເທິງທີ່ບັນທົມມີໝອນໜາອ່ອນນຸ່ມ ຈົນດວງອາທິດຂຶ້ນ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ກະສັດແຄວ້ນມະຄົດຈັກຊົງໄດ້ປ່ອງ ໄດ້ໂອກາດຂອງກະສັດລິດສະຫວີເຫຼົ່ານັ້ນ

ໃນປັດຈຸບັນ ພິກຂຸທັງຫຼາຍໃຊ້ໝອນໄມ້ໜຸນຫົວແລະຕີນ ເປັນຜູ້ບໍ່ຜະໝາດ ມີຄວາມພຽນເຄື່ອງເຜົາກິເລດ ໃນການພ່ຳເພັງພຽນຢູ່ ມານຜູ້ມີບາບຈຶ່ງບໍ່ໄດ້ປ່ອງ ບໍ່ໄດ້ໂອກາດຂອງພິກຂຸເຫຼົ່ານັ້ນ

ແຕ່ໃນອະນາຄົດ ພິກຂຸທັງຫຼາຍ ຈັກເປັນສຸຂຸມານຊາດ ມີຝາມືແລະຕີນອ່ອນນຸ່ມ ນອນເທິງບ່ອນນອນມີໝອນໜາອ່ອນນຸ່ມ ຈົນດວງອາທິດຂຶ້ນ ມານຜູ້ມີບາບຈັກໄດ້ປ່ອງ ໄດ້ໂອກາດຂອງທ່ານທັງຫຼາຍ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍ ຈັກໃຊ້ໝອນໄມ້ໜຸນຫົວແລະຕີນ ເປັນຜູ້ບໍ່ຜະໝາດ ມີຄວາມພຽນເຄື່ອງເຜົາກິເລດ ໃນການພ່ຳເພັງພຽນຢູ່ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ກະລິງຄະຣະສູດທີ ໗ ຈົບ**

# ໗. ນາຄສູດ

## ວ່າດ້ວຍຊ້າງ

[໔໓໑] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະ ເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ພິກຂຸນະວະກະຮູບໜຶ່ງເຂົ້າໄປສູ່ຕະກູນເກີນເວລາ ພິກຂຸທັງຫຼາຍ ຈຶ່ງກ່າວຕັກເຕືອນທ່ານວ່າ ທ່ານຢ່າເຂົ້າໄປສູ່ຕະກູນເກີນເວລາເລີຍ ເມື່ອທ່ານຖືກພິກຂຸທັງຫຼາຍກ່າວຕັກເຕືອນຢູ່ ຈຶ່ງກ່າວແນວນີ້ວ່າ ພິກຂຸຜູ້ເປັນເຖຣະເຫຼົ່ານີ້ ຈັກສຳຄັນຕົນວ່າ ຄວນເຂົ້າໄປສູ່ຕະກູນ ແລ້ວເປັນຫຍັງ? ເຮົາຈັກເຂົ້າໄປບໍ່ໄດ້

ຄັ້ງນັ້ນ ພິກຂຸທັງຫຼາຍ ຈຳນວນຫຼາຍເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍ ອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸນະວະກະຮູບໜຶ່ງໃນພຣະທຳວິໄນນີ້ ເຂົ້າໄປສູ່ຕະກູນເກີນເວລາ ທ່ານຖືກພິກຂຸທັງຫຼາຍກ່າວຕັກເຕືອນ ຈຶ່ງກ່າວແນວນີ້ວ່າ ພິກຂຸຜູ້ເປັນເຖຣະເຫຼົ່ານີ້ຈັກສຳຄັນຕົນວ່າ ຄວນເຂົ້າໄປສູ່ຕະກູນ ແລ້ວເປັນຫຍັງ? ເຮົາຈັກເຂົ້າໄປບໍ່ໄດ້

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ມີສະໃຫຍ່ທີ່ແຄມປ່າແຫ່ງໜຶ່ງ ຊ້າງທັງຫຼາຍອາໄສສະນັ້ນຢູ່ ຊ້າງເຫຼົ່ານັ້ນ ລົງສູ່ສະນັ້ນແລ້ວ ໃຊ້ງວງດຶງເຫງົ້າແລະຮາກບົວຂຶ້ນ ລ້າງໃຫ້ດີແລ້ວ ຫຍ້ຳ ກິນເຫງົ້າແລະຮາກບົວທີ່ບໍ່ມີຕົມ ຢ່າງແຊບ ການເຮັດແນວນັ້ນ ຍ່ອມມີ (ປະໂຫຍດ) ຕໍ່ຜິວພັນແລະກຳລັງຂອງຊ້າງເຫຼົ່ານັ້ນ ຊ້າງເຫຼົ່ານັ້ນ ຈຶ່ງບໍ່ເຖິງຄວາມຕາຍ ຫຼື ທຸກປາງຕາຍຍ້ອນການກິນນັ້ນ ສ່ວນລູກຊ້າງນ້ອຍ ໆ ເຮັດຕາມຊ້າງໃຫຍ່ເຫຼົ່ານັ້ນຄືກັນ ພວກມັນລົງສູ່ສະນັ້ນແລ້ວໃຊ້ງວງດຶງເຫງົ້າ ແລະ ຮາກບົວຂຶ້ນ (ແຕ່) ບໍ່ລ້າງໃຫ້ດີ ບໍ່ຫຍ້ຳໃຫ້ລະອຽດ ກິນທັງຕົມ ການທຳແນວນັ້ນ ຍ່ອມບໍ່ມີ (ປະໂຫຍດ) ຕໍ່ຜິວພັນ ແລະ ກຳລັງຂອງລູກຊ້າງເຫຼົ່ານັ້ນ ລູກຊ້າງເຫຼົ່ານັ້ນຈຶ່ງເຖິງຄວາມຕາຍ ຫຼື ທຸກປາງຕາຍ ຍ້ອນການກິນນັ້ນ

ພິກຂຸຜູ້ເປັນເຖຣະໃນທຳວິໄນນີ້ກໍຄືກັນ ເວລາເຊົ້າຄອງອັນຕະຣະວາສົກຖືບາດແລະຈີວອນເຂົ້າໄປບິນທະບາດຍັງບ້ານ ຫຼື ນິຄົມ ກ່າວທຳໃນບ່ອນນັ້ນ ຄະຫຼືຫັດທັງຫຼາຍ ຜູ້ເຫຼື້ອມໃສເຮັດອາການຂອງຜູ້ເສື່ອມໃສແກ່ທ່ານທັງຫຼາຍ ທ່ານທັງຫຼາຍບໍ່ກຳໜັດ ບໍ່ໝົກມຸ້ນ ບໍ່ພົວພັນ ມີປົກກະຕິເຫັນໂທດ ມີປັນຍາເຄື່ອງສະບັດອອກ ບໍຣິໂພກລາບນັ້ນ ການທຳແນວນັ້ນ ຍ່ອມມີ (ປະໂຫຍດ) ຕໍ່ຜິວພັນແລະກຳລັງຂອງພິກຂຸຜູ້ເປັນເຖຣະເຫຼົ່ານັ້ນ ທ່ານທັງຫຼາຍ ຈຶ່ງບໍ່ເຖິງຄວາມຕາຍ ຫຼື ທຸກປາງຕາຍ ຍ້ອນການບໍຣິໂພກນັ້ນ ສ່ວນພິກຂຸທັງຫຼາຍ ຜູ້ເຮັດຕາມພິກຂຸຜູ້ເປັນເຖຣະເຫຼົ່າ

ນັ້ນຄືກັນ ເວລາເຊົ້າຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປບິນທະບາດຍັງບ້ານຫຼື ນິຄົມ ກ່າວທຳໃນບ່ອນນັ້ນ ຄະຫຼືທັດທັງຫຼາຍຜູ້ເຫຼື້ອມໃສ ເຮັດອາການຂອງຜູ້ເຫຼື້ອມໃສແກ່ທ່ານ ທັງຫຼາຍ ທ່ານທັງຫຼາຍກຳໜັດ ໝົກມຸ້ນ ພົວພັນ ມີປົກກະຕິບໍ່ເຫັນໂທດ ບໍ່ມີປັນຍາເຄື່ອງສະບັດ ອອກ ບໍຣິໂພກລາບນັ້ນ ການທຳແນວນັ້ນ ຍ່ອມບໍ່ມີ (ປະໂຫຍດ) ຕໍ່ຜິວພັນແລະກຳລັງຂອງພິກ ຂຸນະວະກະເຫຼົ່ານັ້ນ ທ່ານທັງຫຼາຍຈຶ່ງເຖິງຄວາມຕາຍ ຫຼື ທຸກປາງຕາຍຍ້ອນການບໍຣິໂພກນັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍຈັກບໍ່ ກຳໜັດ ບໍ່ໝົກມຸ້ນ ບໍ່ພົວພັນ ມີປົກກະຕິເຫັນໂທດ ມີປັນຍາເປັນເຄື່ອງສະບັດອອກບໍຣິໂພກ ລາບນັ້ນ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ນາກສູດທີ ໙ ຈົບ**

# ໑໐. ພິລາຣະສູດ

## ວ່າດ້ວຍແມວ

[໔໓໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ສະໄໝນັ້ນ ພິກຂຸອົງໜຶ່ງທ່ຽວໄປໃນຕະກູນເກີນເວລາ ພິກຂຸທັງຫຼາຍ ຈຶ່ງກ່າວຕັກເຕືອນ ທ່ານວ່າ ທ່ານຢ່າທ່ຽວໄປໃນຕະກູນເກີນເວລາເລີຍ ທ່ານຖືກພິກຂຸທັງຫຼາຍກ່າວຕັກເຕືອນ (ແຕ່) ຍັງບໍ່ເຊົາ ລຳດັບນັ້ນ ພິກຂຸຈຳນວນຫຼາຍ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍ ອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸອົງໜຶ່ງໃນພຣະທຳວິໄນນີ້ທ່ຽວໄປໃນຕະກູນເກີນ ເວລາ ພິກຂຸທັງຫຼາຍ ກ່າວຕັກເຕືອນທ່ານວ່າ ທ່ານຢ່າທ່ຽວໄປໃນຕະກູນເກີນເວລາ ທ່ານຖືກພິກຂຸທັງ ຫຼາຍກ່າວຕັກເຕືອນຈຶ່ງບໍ່ພໍໃຈ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ໄດ້ມີແມວຢືນຖ້າຈັບລູກໜູຢູ່ທີ່ກອງຂີ້ເຫຍື່ອຂ້າງ ທາງລະບາຍຄູດຈາກເຮືອນ ລະຫວ່າງເຮືອນສອງຫຼັງຕໍ່ກັນ ດ້ວຍຄິດວ່າ ລູກໜູນີ້ຈັກໄປຫາເຫຍື່ອ ໃນບ່ອນໃດ ເຮົາຈັກຈັບມັນກິນໃນບ່ອນນັ້ນ ຕໍ່ມາ ລູກໜູອອກໄປຫາເຫຍື່ອ ແມວກໍຈັບລູກໜູນັ້ນ ແລ້ວຟ້າວກັດກືນລົງໄປ ລູກໜູກໍກັດທັງໄສ້ໃຫຍ່ ແລະ ໄສ້ນ້ອຍຂອງແມວນັ້ນ ແມວນັ້ນຈຶ່ງເຖິງ ຄວາມຕາຍ ຫຼື ທຸກປາງຕາຍຍ້ອນການກິນນັ້ນ

ພິກຂຸລາງອົງໃນທຳວິໄນນີ້ກໍຄືກັນ ເວລາເຊົ້າຄອງອັນຕະຣະວາສົກຖືບາດ ແລະ ຈີວອນ ບໍ່ຖືຮັກສາກາຍວາຈາຈິດ ບໍ່ຕັ້ງສະຕິໃຫ້ໝັ້ນຄົງ ບໍ່ສັງລວມອິນຊີເຂົ້າໄປບິນທະບາດຍັງບ້ານຫຼື ນິຄົມ ທ່ານເຫັນມາຕຸຄາມນຸ່ງຫົ່ມບໍ່ຮຽບຮ້ອຍໃນບ່ອນນັ້ນ ຣາຄະກໍລົບກວນຈິດຂອງທ່ານຍ້ອນ ເຫັນມາຕຸຄາມນຸ່ງຫົ່ມບໍ່ຮຽບຮ້ອຍ ທ່ານຖືກຣາຄະລົບກວນຈິດ ຈຶ່ງເຖິງຄວາມຕາຍຫຼືທຸກປາງຕາຍ ການທີ່ທ່ານບອກຄືນສິກຂາກັບມາເປັນຄະຫຼືຫັດນັ້ນ ຈັດເປັນຄວາມຕາຍໃນວິໄນຂອງພຣະອະຣິ ຍະການທີ່ທ່ານຕ້ອງອາບັດເສົ້າໝອງແນວໃດແນວໜຶ່ງ (ແລະ) ການປະພຶດ ຂໍ້ວັດປະຕິບັດເພື່ອ ອອກຈາກອາບັດຕາມທີ່ຕ້ອງນັ້ນ ຈັດເປັນທຸກປາງຕາຍ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍ ຈັກຖື ຮັກສາ ກາຍ ວາຈາ ຈິດ ຕັ້ງສະຕິໃຫ້ໝັ້ນຄົງ ສັງລວມອິນຊີ ເຂົ້າໄປບິນທະບາດໃນເຮືອນ ຫຼື ນິ ຄົມ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ພິລາຣະສູດທີ ໑໐ ຈົບ**

# ໑໑. ສິຄາລະສູດ

## ວ່າດ້ວຍໝາຈອກ

[໔໓໓] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ເມື່ອເຊົ້າມືດນີ້ ທ່ານທັງຫຼາຍ ໄດ້ເຫັນໝາຈອກແກ່ທີ່ມາອາໄສຢູ່ຫຼືບໍ່?

ເຫັນ ຂ້ານ້ອຍ

ໝາຈອກແກ່ນັ້ນ ເປັນຂີ້ເຮື້ອນ ມັນຍາກຈະໄປທາງໃດກໍໄປທາງນັ້ນ ຍາກຈະຢືນຢູ່ໃສ ກໍ ຢືນບ່ອນນັ້ນ ໆ ຍາກຈະນັ່ງຢູ່ໃສ ກໍນັ່ງບ່ອນນັ້ນ ໆ ຍາກຈະນອນຢູ່ໃສ ກໍນອນບ່ອນນັ້ນ ໆ ລົມ ເຢັນ ໆ ຍ່ອມພັດໂຊຍໃຫ້ມັນ

ຂໍ້ທີ່ພິກຂຸລາງອົງໃນທຳວິໄນນີ້ ຜູ້ປະຕິຍານວ່າ ເປັນສາກະຍະບຸດ ໄດ້ອັດຕະພາບແນວນີ້ ເປັນການດີຍິ່ງ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍຈັກບໍ່ຜະ ໝາດ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້

**ສິຄາລະສູດທີ ໑໑ ຈົບ**

# ໑໔. ທຸຕິຍະສິຄາລະສູດ

## ວ່າດ້ວຍໝາຈອກ ສູດທີ ໔

[໔໓໔] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຯລຯ ເຂດເມືອງສາວັດຖີ ຯລຯ

ພິກຂຸທັງຫຼາຍ ເມື່ອເຊົ້າມືດ ທ່ານທັງຫຼາຍ ໄດ້ເຫັນໝາຈອກແກ່ທີ່ມາອາໄສຢູ່ຫຼືບໍ່?

ເຫັນ ຂ້ານ້ອຍ

ພິກຂຸທັງຫຼາຍ ຄວາມກະຕັນຍູກະຕະເວທີບາງແນວຍັງມີໃນໝາຈອກແກ່ນັ້ນ ແຕ່ຄວາມກະຕັນຍູກະຕະເວທີບາງຢ່າງບໍ່ເພິ່ງມີໃນພິກຂຸລາງອົງ ຜູ້ປະຕິຍານຕົນວ່າ ເປັນສາກະຍະບຸດໃນທຳວິໄນນີ້ເລີຍ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງສຶກສາແນວນີ້ວ່າ ເຮົາທັງຫຼາຍ ຈັກເປັນຜູ້ກະຕັນຍູກະຕະເວທີ ແລະ ອຸປະກາຣະແມ່ນພຽງເລັກໜ້ອຍທີ່ບຸກຄົນອື່ນເຮັດໃຫ້ເຮົາທັງຫຼາຍຈັກບໍ່ເສື່ອມສູນໄປ ທ່ານທັງຫຼາຍເພິ່ງສຶກສາແນວນີ້

**ທຸຕິຍະສິຄາລະສູດທີ ໑໔ ຈົບ**

## ລວມພຣະສູດທີ່ມີໃນສັງຍຸດນີ້ ຄື

| | |
|---|---|
| ໑. ກູດສູດ | ໔. ນະຂະສິຂະສູດ |
| ໓. ກຸລະສູດ | ໔. ໂອກຂາສູດ |
| ໕. ສັດຕະສູດ | ໖. ທະນຸກຄະຫະສູດ |
| ໗. ອານີສູດ | ໗. ກະລິງຄະຣະສູດ |
| ໙. ນາກສູດ | ໑໐. ພິລາຣະສູດ |
| ໑໑. ສິຄາລະສູດ | ໑໔. ທຸຕິຍະສິຄາລະສູດ |

**ໂອປັມມະສັງຍຸດ ຈົບບໍລິບູນ**

# ໑໐. ພິກຂຸສັງຍຸດ

## ໑. ໂກລິຕະສູດ

### ວ່າດ້ວຍພຣະໂກລິຕະ

[໔໑໕] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນ ທ່ານພຣະມະຫາໂມກຄັນລານະຮຽກພິກຂຸທັງຫຼາຍມາກ່າວ ວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸທັງຫຼາຍ ຮັບຄຳທ່ານພຣະມະຫາໂມກຄັນລານະແລ້ວ ທ່ານຈຶ່ງໄດ້ກ່າວດັ່ງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ເມື່ອຂ້ານ້ອຍຫຼີບຫຼີກຢູ່ໃນບ່ອນສະງັດແຫ່ງນີ້ ໄດ້ເກີດຄວາມຄິດ ປະຣິວິຕົກວ່າ ທີ່ຮຽກວ່າ ດຸດສະນີພາບອັນປະເສີດ ດຸດສະນີພາບອັນປະເສີດ ດຸດສະນີພາບອັນປະເສີດເປັນແນວໃດ? ຂ້ານ້ອຍໄດ້ມີຄວາມຄິດວ່າ ຍ້ອນວິຕົກວິຈານສະງົບລະງັບໄປແລ້ວ ພິກຂຸໃນພຣະທຳວິໄນນີ້ໄດ້ບັນລຸທຸຕິຍະຊານ ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງໂປ່ໂລ່ຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິແລະສຸກອັນເກີດຈາກສະມາທິຢູ່ ນີ້ຮຽກວ່າ ດຸດສະນີພາບອັນປະເສີດ ຍ້ອນວິຕົກວິຈານສະງົບລະງັບໄປແລ້ວ ຂ້ານ້ອຍນັ້ນ ບັນລຸທຸຕິຍະຊານ ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງໂປ່ໂລ່ຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປິຕິແລະສຸກອັນເກີດຈາກສະມາທິຢູ່ ຂ້ານ້ອຍນັ້ນ ເມື່ອຢູ່ດ້ວຍວິຫານທຳນີ້ ສັນຍາແລະມະນະສິການ ອັນເກີດຮ່ວມກັບວິຕົກຍ່ອມຟຸ້ງຂຶ້ນໄດ້

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ສະເດັດເຂົ້າໄປຫາຂ້ານ້ອຍດ້ວຍລິດ ໄດ້ຕັດວ່າ ໂມກຄັນລານະ ໂມກຄັນລານະຜູ້ເປັນພາມ ຢ່າພະໝາດດຸດສະນີພາບອັນປະເສີດ ທ່ານຈົ່ງລວມຈິດຕັ້ງໄວ້ ໃນດຸດສະນີພາບອັນປະເສີດ ເຮັດຈິດໃຫ້ເປັນທຳເອກໂປ່ໂລ່ຂຶ້ນໃນດຸດສະນີພາບອັນປະເສີດ ຕັ້ງຈິດໝັ້ນໄວ້ໃນດຸດສະນີພາບອັນປະເສີດ ຕໍ່ມາ ຍ້ອນວິຕົກວິຈານສະງົບລະງັບໄປແລ້ວ ຂ້ານ້ອຍນັ້ນບັນລຸ ທຸຕິຍະຊານມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງໂປ່ໂລ່ຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປິຕິ ແລະ ສຸກອັນເກີດຈາກສະມາທິຢູ່

ຜູ້ມີອາຍຸທັງຫຼາຍ ແທ້ຈິງ ບຸກຄົນເມື່ອຈະກ່າວເຖິງຄົນໃດຄົນໜຶ່ງໃຫ້ຖືກຕ້ອງ ຄວນກ່າວວ່າ ສາວົກຜູ້ທີ່ພຣະສາດສະດາຊົງອະນຸເຄາະ ໄດ້ບັນລຸຄວາມຮູ້ອັນຍິ່ງໃຫຍ່ ບຸກຄົນເມື່ອຈະກ່າວ

ເຖິງຂ້ານ້ອຍໃຫ້ຖືກຕ້ອງ ຄວນກ່າວວ່າ ສາວົກຜູ້ທີ່ພຣະສາດສະດາຊົງອະນຸເຄາະໄດ້ບັນລຸຄວາມຮູ້ອັນຍິ່ງໃຫຍ່

**ໂກລິຕະສູດທີ ໑ ຈົບ**

# ໘. ອຸປະຕິດສະສູດ

## ວ່າດ້ວຍພຣະອຸປະຕິດສະ

[໘໓໖] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ໃນບ່ອນນັ້ນ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸທັງຫຼາຍ ຮັບຄຳທ່ານພຣະສາຣີບຸດແລ້ວ ທ່ານຈຶ່ງໄດ້ກ່າວດັ່ງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ເມື່ອຂ້ານ້ອຍຫຼີບຫຼີກຢູ່ໃນບ່ອນສະງັດແຫ່ງນີ້ ໄດ້ເກີດຄວາມຄິດ ປະຣິວິຕົກວ່າ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດເພິ່ງເກີດຂຶ້ນແກ່ເຮົາ ຍ້ອນຄວາມຜັນແປເປັນແນວອື່ນແຫ່ງສັດ ຫຼື ສັງຂານໃດ ສັດຫຼືສັງຂານບາງຢ່າງນັ້ນ ຍັງມີຢູ່ໃນໂລກຫຼືບໍ່? ຂ້ານ້ອຍໄດ້ມີຄວາມຄິດວ່າ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດບໍ່ເພິ່ງບັງເກີດຂຶ້ນແກ່ເຮົາ ຍ້ອນຄວາມຜັນແປເປັນແນວອື່ນແຫ່ງສັດ ຫຼື ສັງຂານທີ່ບໍ່ມີຢູ່ໃນໂລກ ສັດຫຼືສັງຂານແນວນັ້ນ ບໍ່ມີຢູ່ໃນໂລກ

ເມື່ອທ່ານພຣະສາຣີບຸດກ່າວແນວນີ້ແລ້ວ ທ່ານພຣະອານົນໄດ້ຖາມທ່ານພຣະສາຣີບຸດວ່າ ທ່ານພຣະສາຣີບຸດ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດບໍ່ເພິ່ງເກີດຂຶ້ນແກ່ທ່ານຍ້ອນຄວາມຜັນແປເປັນແນວອື່ນ ແມ່ນແຫ່ງພຣະສາດສະດາຫຼືບໍ?

ທ່ານຜູ້ມີອາຍຸ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດບໍ່ເພິ່ງເກີດຂຶ້ນແກ່ຂ້ານ້ອຍ ຍ້ອນຄວາມຜັນແປເປັນແນວອື່ນແມ່ນແຫ່ງພຣະສາດສະດາ ແຕ່ຂ້ານ້ອຍມີຄວາມຄິດວ່າ ທ່ານຜູ້ຈະເລີນ ພຣະສາດສະດາຜູ້ມີສັກໃຫຍ່ ມີຣິດທານຸພາບຫຼາຍ ອັນຕະຣະທານໄປແລ້ວ ຖ້າພຣະອົງເພິ່ງດຳລົງຢູ່ຕະຫຼອດການລະນານ ຂໍ້ນັ້ນ ເພິ່ງເປັນໄປເພື່ອປະໂຫຍດສຸກແກ່ຊົນໝູ່ຫຼາຍ ເພື່ອອະນຸເຄາະ ຊາວໂລກ ເພື່ອປະໂຫຍດເກື້ອກູນ ແລະເພື່ອຄວາມສຸກແກ່ເທວະດາແລະມະນຸດທັງຫຼາຍ

ແມ່ນແນວນັ້ນ ທ່ານພຣະສາຣີບຸດໄດ້ຖອນອະຫັງການ ມະມັງການ ແລະມານານຸໄສໝົດສິ້ນມາດົນແລ້ວ ຍ້ອນແນວນັ້ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ຈຶ່ງບໍ່ເກີດຂຶ້ນແກ່ທ່ານພຣະສາຣີບຸດ ຍ້ອນຄວາມຜັນແປເປັນແນວອື່ນ ແມ່ນແຫ່ງພຣະສາດສະດາ

**ອຸປະຕິດສະສູດທີ ໘ ຈົບ**

# ໙. ຄະຕະສູດ

## ວ່າດ້ວຍໝໍ້

[໘໙] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ສະໄໝນັ້ນ ທ່ານພຣະສາຣີບຸດ ແລະ ທ່ານພຣະມະຫາໂມກຄັນລານະຢູ່ໃນວິຫານຫຼັງດຽວກັນ ໃນພຣະເວລຸວັນສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາຊະຄືເມື່ອໃນເວລາຄ່ຳ ທ່ານພຣະສາຣີບຸດອອກຈາກທີ່ຫຼີບຫຼີກ ເຂົ້າໄປຫາທ່ານພຣະມະຫາໂມກຄັນລານະເຖິງທີ່ຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນກັບທ່ານພຣະມະຫາໂມກຄັນລານະແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະມະຫາໂມກຄັນລານະດັ່ງນີ້ ວ່າ

ທ່ານໂມກຄັນລານະ ອິນຊີຂອງທ່ານຜ່ອງໃສຍິ່ງ ຜິວໜ້າຂອງທ່ານບໍລິສຸດ ຜຸດຜ່ອງມື້ນີ້ທ່ານຈະຢູ່ດ້ວຍວິຫານທຳອັນລະອຽດ

ທ່ານຜູ້ມີອາຍຸ ມື້ນີ້ ຂ້ານ້ອຍຢູ່ດ້ວຍວິຫານທຳອັນຫຍາບ ແຕ່ຂ້ານ້ອຍໄດ້ມີການສົນທະນາທຳ

ທ່ານໄດ້ສົນທະນາທຳກັບໃຜ?

ຂ້ານ້ອຍ ໄດ້ສົນທະນາທຳກັບພຣະຜູ້ມີພຣະພາກເຈົ້າ

ດຽວນີ້ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ໄກເກີນໄປ ທ່ານໄປເຝົ້າພຣະຜູ້ມີພຣະພາກເຈົ້າດ້ວຍລິດ ຫຼື ວ່າພຣະອົງສະເດັດມາຫາທ່ານດ້ວຍລິດບໍ?

ຂ້ານ້ອຍ ບໍ່ໄດ້ໄປເຝົ້າພຣະຜູ້ມີພຣະພາກເຈົ້າດ້ວຍລິດ ແມ່ນພຣະອົງກໍບໍ່ໄດ້ສະເດັດມາຫາຂ້ານ້ອຍດ້ວຍລິດ ແຕ່ຂ້ານ້ອຍມີຕາທິບ ແລະ ຫູທິບອັນມົດຈົດທໍ່ພຣະຜູ້ມີພຣະພາກເຈົ້າ ແມ່ນພຣະຜູ້ມີພຣະພາກເຈົ້າ ກໍຊົງມີທິບພະຈັກຂຸ ແລະ ທິບພະໂສຕະທາດອັນມົດຈົດທໍ່ຂ້ານ້ອຍ

ທ່ານໄດ້ສົນທະນາທຳກັບພຣະຜູ້ມີພາຄວ່າແນວໃດ?

ຂ້ານ້ອຍ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ຜູ້ຜາຣົບຄວາມພຽນ ຜູ້ຜາຣົບຄວາມພຽນ ດ້ວຍເຫດທໍ່ໃດນໍ ພິກຂຸຈຶ່ງຊື່ວ່າເປັນຜູ້ຜາຣົບຄວາມພຽນ ເມື່ອຂ້ານ້ອຍທູນຖາມແນວນີ້ ແມ່ນພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບຂ້ານ້ອຍວ່າ ໂມກຄັນລານະ ພິກຂຸໃນທຳວິໄນນີ້ ເປັນຜູ້ຜາຣົບຄວາມພຽນຢູ່ດ້ວຍຕັ້ງສັດຢາທິດຖານວ່າ ຊີ້ນ ແລະເລືອດໃນຮ່າງກາຍຈົ່ງເຫືອດແຫ້ງໄປຈະເຫຼືອຢູ່ແຕ່ໜັງ ເອັນ ກະດູກກໍຕາມທີເທີ້ນ ຜົນອັນໃດເພິ່ງບັນລຸໄດ້ດ້ວຍເຫື່ອແຮງຂອງບຸຣຸດ ດ້ວຍຄວາມພຽນຂອງບຸຣຸດ ດ້ວຍຄວາມບາກບັ່ນຂອງບຸຣຸດ (ຖ້າ) ບໍ່ບັນລຸຜົນນັ້ນແລ້ວກໍຈັກບໍ່ຢຸດຄວາມພຽນ ພິກຂຸຊື່ວ່າ ເປັນຜູ້ຜາຣົບຄວາມພຽນເປັນແນວນີ້ ຂ້ານ້ອຍໄດ້ສົນທະນາທຳກັບພຣະຜູ້ມີພຣະພາກເຈົ້າແນວນີ້

ປຽບຄື ກ້ອນຫີນນ້ອຍ ໆ ທີ່ບຸກຄົນເອົາໄປວາງທຽບກັບພູຫຼວງຫິມະພານ ສັນໃດ ຂ້ານ້ອຍ ເມື່ອປຽບທຽບກັບທ່ານກໍສັນນັ້ນ ແທ້ຈິງ ທ່ານເປັນຜູ້ມີລິດທານຸພາບຫຼາຍ ເມື່ອປາຖະໜາເພິ່ງດຳລົງຢູ່ໄດ້ຕະຫຼອດກັບແລ

ທ່ານຜູ້ມີອາຍຸ ປຽບຄື ກ້ອນເກືອນ້ອຍ ໆ ທີ່ບຸກຄົນເອົາໄປວາງທຽບກັບໝໍ້ເກືອໃຫຍ່ ສັນໃດ ຂ້ານ້ອຍ ເມື່ອປຽບທຽບກັບທ່ານກໍສັນນັ້ນ ແທ້ຈິງ ທ່ານເປັນຜູ້ທີ່ພຣະຜູ້ມີພຣະພາກເຈົ້າຊົງຊົມເຊີຍ ສັນເສີນ ຍ້ອງຍໍໂດຍອະເນກປະຣິຍາຍເປັນຕົ້ນ ວ່າ

ພິກຂຸ ຜູ້ເຖິງຝັ່ງພຣະນິບພານ ຜູ້ປະເສີດດ້ວຍປັນຍາ<br>
ສິນ ແລະ ອຸປະສະມະ ຄື ສາຣີບຸດ ນີ້ແລ

ພຣະມະຫາເຖຣະຜູ້ປະເສີດທັງ ໒ ນັ້ນ ເພີດເພີນໃນຄຳສົນທະນາທີ່ເປັນສຸພາສິດຂອງກັນແລະກັນດ້ວຍປະການແນວນີ້

**ຄະຕະສູດທີ ໓ ຈົບ**

# ໔. ນະວະສູດ

## ວ່າດ້ວຍຜູ້ໃໝ່

[໔໓໗] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ສະໄໝນັ້ນ ພິກຂຸນະວະກະຮູບໜຶ່ງກັບຈາກບິນທະບາດຫຼັງຈາກສັນສຳເລັດເຂົ້າໄປສູ່ວິຫານ ມີຄວາມຂົນຂວາຍໜ້ອຍມິດເສີຍຢູ່ ບໍ່ຊ່ວຍເຫຼືອພິກຂຸທັງຫຼາຍໃນເວລາເຮັດຈີວອນ ຄັ້ງນັ້ນ ພິກຂຸຈຳນວນຫຼາຍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸນະວະກະອົງໜຶ່ງ ໃນພຣະທຳວິໄນນີ້ກັບຈາກບິນທະບາດ ຫຼັງຈາກສັນສຳເລັດເຂົ້າໄປສູ່ວິຫານ ມີຄວາມຂົນຂວາຍໜ້ອຍມິດເສີຍຢູ່ ບໍ່ຊ່ວຍເຫຼືອພິກຂຸທັງຫຼາຍໃນເວລາເຮັດຈີວອນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸອົງໜຶ່ງມາຕັດວ່າ ພິກຂຸທ່ານຈົ່ງໄປບອກພິກຂຸນັ້ນ ຕາມຄຳຂອງເຮົາວ່າ ຜູ້ມີອາຍຸ ພຣະສາດສະດາຮັບສັ່ງໃຫ້ທ່ານເຂົ້າເຝົ້າ ພິກຂຸນັ້ນທູນຮັບສະໜອງພຣະດຳຣັດແລ້ວເຂົ້າໄປຫາພິກຂຸນັ້ນ ໄດ້ກ່າວວ່າ ຜູ້ມີອາຍຸ ພຣະສາດສະດາຮັບສັ່ງໃຫ້ທ່ານເຂົ້າເຝົ້າ ທ່ານຮັບຄຳພິກຂຸນັ້ນແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພິກຂຸນັ້ນວ່າ ພິກຂຸໄດ້ຂ່າວວ່າ ທ່ານກັບຈາກບິນທະບາດຫຼັງຈາກສັນສຳເລັດເຂົ້າໄປສູ່ວິຫານ ມີຄວາມຂົນຂວາຍໜ້ອຍມິດເສີຍຢູ່ ບໍ່ຊ່ວຍເຫຼືອພິກຂຸທັງຫຼາຍໃນເວລາເຮັດຈີວອນແມ່ນບໍ?

ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນແລ້ວ ຍ້ອນວ່າຂ້າພຣະອົງມີກິດທີ່ຈະຕ້ອງເຮັດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຄວາມຄິດປະຣິວິຕົກທາງຈິດຂອງພິກຂຸນັ້ນ ຈຶ່ງຮັບສັ່ງ ຮຽກພິກຂຸທັງຫຼາຍ ມາດ້ວຍຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຢ່າໂທດພິກຂຸນີ້ເລີຍພິກຂຸນີ້ ມີປົກກະຕິໄດ້ຊານ ໔ ອັນເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນທີ່ອາໄສອະທິຈິດຕາມປາຖະໜາໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດ ໂດຍຖືກຕ້ອງ ປາຖະໜາດ້ວຍປັນຍາ ອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ບຸກຄົນຜາຣົບຄວາມພຽນໜ່ອນຍານ
ກໍາລັງໜ້ອຍບໍ່ເພິ່ງບັນລຸນິບພານ
ອັນເປັນເຫດປົດເປື້ອງກິເລດເຄື່ອງຮ້ອຍຮັດທັງປວງໄດ້
ສ່ວນພິກຂຸໜຸ່ມຮູບນີ້ເປັນອຸດົມບຸຣຸດ
ຊະນະມານພ້ອມທັງກອງທັບໄດ້ແລ້ວ
ຊົງໄວ້ເຊິ່ງອັດຕະພາບສຸດທ້າຍ

**ນະວະສູດທີ ໔ ຈົບ**

# ໕. ສຸຊາດສູດ

## ວ່າດ້ວຍພຣະສຸຊາດ

[໔໓໗] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ທ່ານພຣະສຸຊາດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ພຣະຜູ້ມີພຣະພາກເຈົ້າ ໄດ້ທອດພຣະເນດເຫັນທ່ານກໍາລັງຍ່າງມາແຕ່ໄກ ແລ້ວຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ

ພິກຂຸທັງຫຼາຍ ກຸນລະບຸດນີ້ຍ່ອມງາມດ້ວຍສົມບັດ ໒ ປະການ ຄື

໑. ມີຮູບງາມ ໜ້າເບິ່ງ ໜ້າຊົມ ປະກອບດ້ວຍຜິວພັນງາມຍິ່ງ
໒. ໄດ້ເຮັດໃຫ້ແຈ້ງປະໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດ ໂດຍຖືກຕ້ອງ ປາຖະໜາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ພິກຂຸນີ້ງາມດ້ວຍໃຈທີ່ຊື່ກົງ
ເປັນຜູ້ລຸດພົ້ນ ພາກໄດ້ແລ້ວ ດັບແລ້ວ

ຍ້ອນບໍ່ຖືໝັ້ນ ຊະນະມານພ້ອມທັງກອງທັບໄດ້ແລ້ວ
ຊົງໄວ້ເຊິ່ງອັດຕະພາບສຸດທ້າຍ

**ສຸຊາດສູດທີ ໕ ຈົບ**

# ໖. ລະກຸນຕະກະພັດທິຍະສູດ
## ວ່າດ້ວຍພຣະລະກຸນຕະກະພັດທິຍະ

[໔໔໐] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ທ່ານພຣະລະກຸໜະຕະກະພັທທິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານກຳລັງຍ່າງມາແຕ່ໄກ ແລ້ວຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເຫັນພິກຂຸຜູ້ມີຜິວພັນບໍ່ງາມ ບໍ່ໜ້າເບິ່ງ ເຕ້ຍ ເປັນຜູ້ຖືກພິກຂຸທັງຫຼາຍ ດູຖູກ ທີ່ກຳລັງຍ່າງມານັ້ນບໍ?

ເຫັນ ຂ້ານ້ອຍ

ພິກຂຸນັ້ນ ມີລິດທານຸພາບຫຼາຍ ອັນໜຶ່ງ ສະມາບັດທີ່ທ່ານບໍ່ເຄີຍເຂົ້າ ທ່ານກໍເຂົ້າໄດ້ໂດຍງ່າຍແລະທ່ານໄດ້ເຮັດໃຫ້ແຈ້ງປະໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດ ໂດຍຖືກຕ້ອງ ປາຖະໜາ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາ ປະພັນຕໍ່ໄປອີກ ວ່າ

ສັດທັງຫຼາຍ ຈຳພວກຫົງ ນົກກະຮຽນ ນົກຍູງ
ຊ້າງ ໂຕຟານ ທັງໝົດ ຍ່ອມຢ້ານຣາດຊະສີ
ຄວາມສົມດຸນກັນທາງກາຍບໍ່ມີ ສັນໃດ
ບັນດາໝູ່ມະນຸດກໍສັນນັ້ນ ຖ້າຄົນໜຸ່ມມີປັນຍາ
ເຂົາກໍຍ່ອມເປັນໃຫຍ່ໃນໝູ່ມະນຸດນັ້ນ
ບໍ່ຄືຄົນພານ ເຊິ່ງຖືກາຍເປັນໃຫຍ່

**ລະກຸນຕະກະພັດທິຍະສູດທີ ໖ ຈົບ**

# ໗. ວິສາຂະສູດ

## ວ່າດ້ວຍພຣະວິສາຂະ

[໔໔໑] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາປ່າມະຫາວັນ ເຂດເມືອງເວສາລີ ສະໄໝນັ້ນ ທ່ານພຣະວິສາຂະປັນຈາລະບຸດ ໄດ້ຊີ້ແຈ່ງໃຫ້ພິກຂຸທັງຫຼາຍໃນສາລາເປັນທີ່ບຳລຸງເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ປະກອບດ້ວຍວາຈາມ່ວນ ສະລະສະລວຍປາສະຈາກໂທດ ນັບເນື່ອງເຂົ້າໃນວາຈາທີ່ໃຫ້ເຂົ້າໃຈເນື້ອຄວາມ ບໍ່ອິງອາໄສ

ເມື່ອໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າຊົງອອກຈາກທີ່ຫຼີບຫຼີກ ສະເດັດເຂົ້າໄປສູ່ສາລາເປັນທີ່ບຳລຸງ ປະທັບນັ່ງເທິງອາສະນະທີ່ເຂົາປູລາດໄວ້ ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍ ໃຜນໍ? ໄດ້ຊີ້ແຈ່ງໃຫ້ພິກຂຸທັງຫຼາຍໃນສາລາເປັນທີ່ບຳລຸງເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ປະກອບດ້ວຍວາຈາມ່ວນ ສະລະສະລວຍປາສະຈາກໂທດ ນັບເນື່ອງເຂົ້າໃນວາຈາທີ່ໃຫ້ເຂົ້າໃຈເນື້ອຄວາມບໍ່ອິງອາໄສ

ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະວິສາຂະປັນຈາລະບຸດ ໄດ້ຊີ້ແຈ່ງໃຫ້ພິກຂຸທັງຫຼາຍໃນສາລາເປັນທີ່ບຳລຸງເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານ ແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ປະກອບດ້ວຍວາຈາມ່ວນ ສະລະສະລວຍປາສະຈາກໂທດ ນັບເນື່ອງເຂົ້າໃນວາຈາທີ່ໃຫ້ເຂົ້າໃຈເນື້ອຄວາມບໍ່ອິງອາໄສ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ກາກຮັບສັ່ງຮຽກທ່ານພຣະວິສາຂະປັນຈາລະບຸດມາຕັດວ່າ ດີແລ້ວ ດີແລ້ວ ວິສາຂະ ທ່ານໄດ້ຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ຯລຯ ດ້ວຍທຳມີກະຖາ ນັບເນື່ອງ ເຂົ້າໃນວາຈາທີ່ໃຫ້ເຂົ້າໃຈເນື້ອຄວາມບໍ່ອິງອາໄສ ດີຫຼາຍແທ້

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ຊົນທັງຫຼາຍ ຈະບໍ່ຮູ້ຈັກຄົນຜູ້ບໍ່ເວົ້າ
ວ່າມີເຊື້ອເປັນພານຫຼືເປັນບັນດິດ
ແຕ່ຍ່ອມຮູ້ຈັກຄົນຜູ້ເວົ້າ ຜູ້ສະແດງອະມະຕະບົດ

ບຸກຄົນເພິ່ງກ່າວທຳ ເພິ່ງຍັງທຳໃຫ້ຮຸ່ງສະຫວ່າງແຈ້ງ
ຖືເອົາທຸງໄຊຂອງລືສີ
ລືສີທັງຫຼາຍມີສຸພາສິດເປັນທຸງໄຊ
ທຳນັ້ນເອງ ເປັນທຸງໄຊຂອງລືສີ

**ວິສາຂະສູດທີ ໗ ຈົບ**

# ໘. ນັນທະສູດ

## ວ່າດ້ວຍພຣະນັນທະ

[໔໘໘] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ທ່ານພຣະນັນທະ ຜູ້ເປັນໂອຣົດຂອງພຣະມາຕຸດສາຂອງພຣະຜູ້ມີພຣະພາກເຈົ້າ ຫົ່ມຈີວອນທີ່ທຸບແລ້ວທຸບອີກ ຍອດໜ່ວຍຕາ ແລະ ຖືບາດມີສີແວວວາວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດວ່າ

ນັນທະ ຂໍ້ທີ່ທ່ານຫົ່ມຈີວອນທີ່ທຸບແລ້ວທຸບອີກ ຍອດໜ່ວຍຕາແລະຖືບາດມີສີກາວວາວບໍ່ສົມຄວນແກ່ທ່ານ ຜູ້ເປັນກຸນລະບຸດເຊິ່ງອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາ ຂໍ້ທີ່ທ່ານເພິ່ງເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ເປັນຜູ້ນຸ່ງຫົ່ມຜ້າ ບັງສຸກຸນເປັນຂໍ້ວັດປະຕິບັດ ແລະ ບໍ່ມຸ້ງຫວັງໃນກາມທັງຫຼາຍຢູ່ ຢ່າງນີ້ ຈຶ່ງສົມຄວນແກ່ທ່ານຜູ້ເປັນກຸນລະບຸດ ເຊິ່ງອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ເມື່ອໃດ ເຮົາຈະໄດ້ເຫັນນັນທະຢູ່ປ່າເປັນຂໍ້ວັດປະຕິບັດ
ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ
ຍັງອັດຕະພາບໃຫ້ເປັນໄປດ້ວຍໂພຊະນະທີ່ຜະສົມກັນ
ບໍ່ມຸ້ງຫວັງໃນກາມທັງຫຼາຍ

ຕໍ່ມາ ທ່ານພຣະນັນທະໄດ້ເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ແລະ ບໍ່ມຸ້ງຫວັງໃນກາມທັງຫຼາຍຢູ່

**ນັນທະສູດທີ ໙ ຈົບ**

# ໑. ຕິດສະສູດ

## ວ່າດ້ວຍພຣະຕິດສະ

[໔໔໓] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ທ່ານພຣະຕິດສະຜູ້ເປັນໂອຣົດຂອງພຣະປິຕຸດສາຂອງພຣະຜູ້ມີພຣະພາກເຈົ້າ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າທີ່ປະທັບ ຖວາຍອະພິວາດແລ້ວນັ່ງເປັນທຸກ ເສຍໃຈ ນໍ້າຕາໄຫລອາບແກ້ມນັ່ງຢູ່ທີ່ສົມຄວນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດຖາມທ່ານພຣະຕິດສະດັ່ງນີ້ວ່າ ຕິດສະ ເປັນຫຍັງ? ທ່ານຈຶ່ງນັ່ງເປັນທຸກເສຍໃຈ ນໍ້າຕາໄຫລອາບແກ້ມນັ່ງຢູ່ແນວນີ້ນໍ?

ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນແນວນັ້ນ ພິກຂຸທັງຫຼາຍ ໄດ້ພາກັນຫຸ້ມວ່າກ່າວສຽດແທງຂ້າພຣະອົງ

ແມ່ນແນວນັ້ນ ຕິດສະ ທ່ານເປັນຜູ້ວ່າກ່າວເຂົາຝ່າຍດຽວ ແຕ່ທ່ານບໍ່ອົດທົນຕໍ່ຄຳເວົ້າທີ່ເຂົາວ່າກ່າວ ຂໍ້ທີ່ທ່ານເປັນຜູ້ວ່າກ່າວເຂົາຝ່າຍດຽວ ແຕ່ບໍ່ອົດທົນຕໍ່ຄຳເວົ້າ ທີ່ເຂົາວ່າກ່າວນັ້ນ ບໍ່ສົມຄວນແກ່ທ່ານຜູ້ເປັນກຸນລະບຸດ ເຊິ່ງອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາ ຂໍ້ທີ່ທ່ານເປັນຜູ້ວ່າກ່າວເຂົາດ້ວຍ ແລະ ອົດທົນຕໍ່ຄຳເວົ້າທີ່ເຂົາວ່າກ່າວໄດ້ດ້ວຍ ນັ້ນເອງ ຈຶ່ງສົມຄວນແກ່ທ່ານຜູ້ເປັນກຸນລະບຸດ ເຊິ່ງອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ອີກໄປ ວ່າ

ທ່ານຈະໂກດໄປເຮັດຫຍັງ ຢ່າໂກດເລີຍ ຕິດສະ
ຄວາມບໍ່ໂກດເປັນທຳປະເສີດສຳລັບທ່ານ
ແທ້ຈິງ ບຸກຄົນຢູ່ປະພຶດພົມມະຈັນ
ກໍເພື່ອກຳຈັດຄວາມໂກດ ຄວາມຖືໂຕ
ແລະຄວາມລົບຫຼູ່ຄຸນທ່ານ

**ຕິດສະສູດທີ ໑ ຈົບ**

# ๑๐. ເຖຣະນາມະກະສູດ

## ວ່າດ້ວຍພຣະເຖຣະນາມກະ

[໔໔໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາດຊະຄຶ ສະໄໝນັ້ນ ພຣະເຖຣະນາມະກະມີປົກກະຕິຢູ່ຜູ້ດຽວ ແລະມີປົກກະຕິກ່າວສັນເສີນການຢູ່ຜູ້ດຽວ ທ່ານເຂົ້າໝູ່ບ້ານບິນທະບາດຜູ້ດຽວ ກັບຜູ້ດຽວ ນັ່ງໃນບ່ອນລັບຜູ້ດຽວ ແລະ ອະທິຖານຈົງກົມຜູ້ດຽວ

ລຳດັບນັ້ນ ພິກຂຸຈຳນວນຫຼາຍ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະເຖຣະນາມກະຮູບໜຶ່ງໃນພຣະທຳວິໄນນີ້ ມີປົກກະຕິຢູ່ຜູ້ດຽວແລະມີປົກກະຕິກ່າວສັນເສີນການຢູ່ຜູ້ດຽວ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸອົງໜຶ່ງມາຕັດວ່າ ມາເທີ້ນພິກຂຸທ່ານຈົ່ງໄປຮຽກເຖຣະນາມະກະຕາມຄຳຂອງເຮົາວ່າ ທ່ານເຖຣະ ພຣະສາດສະດາຮັບສັ່ງໃຫ້ທ່ານເຂົ້າເຝົ້າ ພິກຂຸນັ້ນ ທູນຮັບສະໜອງພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ເຂົ້າໄປຫາທ່ານພຣະເຖຣະຮອດບ່ອນຢູ່ ແລ້ວກ່າວວ່າ ທ່ານເຖຣະ ພຣະສາດສະດາຮັບສັ່ງໃຫ້ທ່ານເຂົ້າເຝົ້າ ທ່ານພຣະເຖຣະຮັບຄຳພິກຂຸນັ້ນແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານເຖຣະດັ່ງນີ້ວ່າ ເຖຣະໄດ້ຂ່າວວ່າ ທ່ານມີປົກກະຕິຢູ່ຜູ້ດຽວ ແລະ ມີປົກກະຕິກ່າວສັນເສີນການຢູ່ຜູ້ດຽວ ແມ່ນບໍ?

ແມ່ນແລ້ວ ຂ້ານ້ອຍ

ເປັນຫຍັງ? ທ່ານຈຶ່ງມີປົກກະຕິຢູ່ຜູ້ດຽວ ແລະ ມີປົກກະຕິກ່າວສັນເສີນການຢູ່ຜູ້ດຽວ

ຂ້າແດ່ ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ຂ້າພຣະອົງເຂົ້າໝູ່ບ້ານບິນທະບາດຜູ້ດຽວ ກັບຜູ້ດຽວ ນັ່ງໃນບ່ອນລັບຜູ້ດຽວ ອະທິຖານຈົງກົມຜູ້ດຽວ ຂ້າພຣະອົງມີປົກກະຕິຢູ່ຜູ້ດຽວ ແລະມີປົກກະຕິກ່າວສັນເສີນການຢູ່ຜູ້ດຽວ ຢ່າງນີ້

ການຢູ່ຜູ້ດຽວນີ້ມີຢູ່ ເຮົາບໍ່ໄດ້ກ່າວວ່າ ບໍ່ມີ ແຕ່ການຢູ່ຜູ້ດຽວຂອງທ່ານເປັນອັນບໍລິບູນໂດຍພິດສະດານກວ່າດ້ວຍປະການໃດ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີດ້ວຍປະການນັ້ນ ເຮົາຈັກກ່າວ ທ່ານພຣະເຖຣະທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດ ວ່າ

ການຢູ່ຜູ້ດຽວທີ່ບໍລິບູນໂດຍພິດສະດານກວ່າ ເປັນແນວໃດ?

ເຖຣະ ໃນເລື້ອງນີ້ ສິ່ງໃດທີ່ລ່ວງໄປແລ້ວ ສິ່ງນັ້ນກໍລະໄດ້ແລ້ວ ສິ່ງໃດຍັງບໍ່ມາເຖິງ ສິ່ງນັ້ນກໍຄວນສະລະເສຍ ແລະ ຄວາມກຳໜັດດ້ວຍຄວາມພໍໃຈໃນການໄດ້ອັດຕະພາບໃນປັດຈຸບັນ ກໍຖືກກຳຈັດດ້ວຍດີແລ້ວ ການຢູ່ຜູ້ດຽວທີ່ບໍລິບູນໂດຍພິດສະດານກວ່າ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາ ປະພັນຕໍ່ອີກໄປວ່າ

ເຮົາຮຽກນໍຣະຊົນຜູ້ຄອບງຳທຳທັງປວງ ຜູ້ຮູ້ທຸກຢ່າງ
ມີປັນຍາດີ ບໍ່ເປີເປື້ອນໃນທຳທັງປວງ
ລະສິ່ງທັງປວງໄດ້ແລ້ວ ລຸດພົ້ນແລ້ວ
ໃນຍ້ອນທຳເປັນທີ່ສິ້ນຕັນຫາ
ວ່າເປັນຜູ້ມີປົກກະຕິຢູ່ຜູ້ດຽວ

**ເຖຣະນາມະກະສູດທີ ໑໐ ຈົບ**

# ໑໑. ມະຫາກັບປິນະສູດ

## ວ່າດ້ວຍພຣະມະຫາກັບປິນະ

[໘໔໕] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ທ່ານພຣະມະຫາກັບປິນະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະມະຫາກັບປິນະກຳລັງຍ່າງມາແຕ່ໄກ ຈຶ່ງຮັບສັ່ງຮຽກພິກຂຸທັງຫຼາຍມາຕັດຖາມ ວ່າ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເຫັນພິກຂຸຜູ້ສູງຂາວ ດັງໂດ່ງ ກຳລັງຍ່າງມານັ້ນບໍ?

ເຫັນ ຂ້ານ້ອຍ

ພິກຂຸນັ້ນ ມີລິດທານຸພາບຫຼາຍ ອັນໜຶ່ງ ສະມາບັດທີ່ທ່ານບໍ່ເຄີຍເຂົ້າ ທ່ານກໍເຂົ້າໄດ້ໂດຍງ່າຍ ທ່ານໄດ້ເຮັດໃຫ້ແຈ້ງປະໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດ

ອອກຈາກເຮືອນບວດເປັນບັນພະຊິດ ໂດຍຖືກຕ້ອງ ປາຖະໜາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາ ປະພັນຕໍ່ອີກໄປ ວ່າ

ໃນໝູ່ຊົນທີ່ຖືຕະກູນເປັນໃຫຍ່
ກະສັດຈັດວ່າເປັນຜູ້ປະເສີດທີ່ສຸດ
ສ່ວນທ່ານຜູ້ພຽບພ້ອມດ້ວຍວິດຊາແລະຈະຣະນະ
ຈັດວ່າເປັນຜູ້ປະເສີດທີ່ສຸດ ໃນໝູ່ເທວະດາແລະມະນຸດ
ດວງອາທິດສ່ອງແສງເຈີດຈ້າໃນກາງເວັນ
ດວງຈັນສ່ອງແສງເຈີດຈ້າໃນກາງຄືນ
ກະສັດຜູ້ຊົງເຄື່ອງຮົບຍ່ອມສະງ່າງາມ
ພາມຜູ້ເພ່ງຊານ ຍ່ອມຮຸ່ງເຮືອງ
ສ່ວນພຣະພຸດທະເຈົ້າຍ່ອມຮຸ່ງເຮືອງ
ດ້ວຍພຣະເດຊານຸພາບຕະຫຼອດທັງມື້ແລະຄືນ

**ມະຫາກັບປິນະສູດທີ ໑໑ ຈົບ**

## ໑໔. ສະຫາຍະກະສູດ
## ວ່າດ້ວຍພິກຂຸຜູ້ເປັນເພື່ອນກັນ

[໒໔໓] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ພິກຂຸຜູ້ເປັນເພື່ອນກັນ ໒ ອົງ ເຊິ່ງເປັນສັດທິວິຫາຣິກຂອງທ່ານພຣະມະຫາກັບປິນະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ພຣະຜູ້ມີພຣະພາກເຈົ້າ ໄດ້ທອດພຣະເນດເຫັນທ່ານທັງສອງກຳລັງຍ່າງມາແຕ່ໄກ ຈຶ່ງຮັບສັ່ງຮຽກພິກຂຸທັງຫຼາຍມາຕັດຖາມ ວ່າ

ພິກຂຸທັງຫຼາຍ ທ່ານທັງຫຼາຍເຫັນພິກຂຸຜູ້ເປັນເພື່ອນກັນ ໒ ອົງ ເຊິ່ງເປັນສັດທິວິຫາຣິກຂອງພຣະມະຫາກັບປິນະກຳລັງຍ່າງມານັ້ນບໍ?

ເຫັນ ຂ້ານ້ອຍ

ພິກຂຸ ໒ ອົງນັ້ນ ມີລິດທານຸພາບຫຼາຍ ແລະ ສະມາບັດທີ່ທ່ານທັງສອງບໍ່ເຄີຍເຂົ້າ ທ່ານທັງສອງກໍເຂົ້າໄດ້ໂດຍງ່າຍ ທ່ານທັງສອງໄດ້ເຮັດໃຫ້ແຈ້ງປະໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດ ໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນອີກຕໍ່ໄປ ວ່າ

ພິກຂຸເຫຼົ່ານີ້ ເປັນເພື່ອນກັນມາດົນ ແລະ ມີຄວາມຮູ້ສະເໝີກັນ
ສັດທຳຂອງທ່ານທັງສອງທຽບຄຽງໄດ້ໃນທຳທີ່ພຣະພຸດທະເຈົ້າປະກາດແລ້ວ
ທ່ານທັງຫຼາຍອັນກັບປິນະແນະນຳດີແລ້ວໃນທຳ
ທີ່ພຣະອະຣິຍະເຈົ້າປະກາດແລ້ວ ຊະນະມານພ້ອມທັງກອງທັບໄດ້
ຊົງໄວ້ເຊິ່ງອັດຕະພາບສຸດທ້າຍ

**ສະຫາຍະກະສູດທີ ໑໒ ຈົບ**

**ພິກຂຸສັງຍຸດ ຈົບບໍລິບູນ**

## ລວມພຣະສູດທີ່ມີໃນສັງຍຸດນີ້ ຄື



**ນິທານວັກທີ ໒ ຈົບ**

## ລວມສັງຍຸດທີ່ມີໃນນິທານສັງຍຸດນີ້ ຄື

໗. ທາຫຸນສັງຍຸດ

໘. ໂອປຳມະສັງຍຸດ

໙. ລັກຂະນະສັງຍຸດ

໑໐. ພິກຂຸສັງຍຸດ

## ລວມຮຽກວ່າ ວັກທີ ໘

## ນິທານວັກສັງຍຸດ ຈົບບໍລິບູນ